# ເຫຼືອພຽງແພນິນ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ

ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1970

(♩ = 74)

Slow

C Gm C F

(Sax) ____ (Bass)

F C F



ແພ ນິນ ຜືນ ນີ້ ທີ່ ເຂົາ ມອບ ໃຫ້______ ຖັກ ຮູບ ຫົວ ໃຈ ໃຫ້ ໄວ້ ເປັນ ອະ ນຸ ສອນ ຈ້ອງ -

B♭ F Gm



ມອງ ຄັ້ງ ໃດ ຊວນ ໃຫ້ ອາ ວອນ ພາບ ຄວາມ ຫຼັງ ກ່ອນ ຫຼອກ ຫຼອນ ດວງ ໃຈ...

C F C F



ດັ່ງ ມີ ມົນ ຂັງ ຝັງ ໃນ ຜືນ ຜ້າ______ ຈຶ່ງ ຄ່ຳ ນຶງ ຫາ ເຈົ້າ ຂອງ ແພ ຜ້າ ບໍ່ ຫາຍ ຍິ່ງ -

B♭ F Dm C F



ມອງ ຍິ່ງ ຊວນ ໃຫ້ ໝອງ ດວງ ໃຈ ເມື່ອ ເຂົາ ແໜງ ໜ່າຍ ປ່ຽນ ໃຈ ໄປ ຈາກ ເຮົາ...

B♭ F B♭ C



ດວງ ໃຈ ຈຶ່ງ ຊ້ຳ ຣະ ກຳ ທຸກ ຄືນ ແພ ນິນ ຈຶ່ງ ຊຶມ ດ້ວຍ ຢາດ ນ້ຳ ຕາ ອັບ

F Dm Gm



ເສົາ ນາງ ລືມ ສັນ ຍາ ສາ ບານ ກ່ອນ ເກົ່າ ປ່ອຍ ເຮົາ ເຫງົາ - ໃຈ...

C F C F



ພຽງ ແພ ຜືນ ນີ້ ທີ່ ຄົງ ເຫຼືອ ຢູ່______ ແຕ່ ຂາດ ຍອດ ຮູ້ ຂ້າ ຈຶ່ງ ຕ້ອງ ຢູ່ ດຽວ ດາຍ ໂອ້ -

B♭ F Dm C F B♭m



ເຮົາ ເຝົ້າ ຫຼົງ ຖ ນອມ ວິມ ວາຍ ເຖິງ ເຂົາ ແໜງ ໜ່າຍ ແຕ່ ໃຈ ເຮົາ ໝັ້ນ ຄົງ... (Sax) ______

Coda

F6



# ເຫຼືອພຽງແພມົນ

Key : F
Slow

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1970

1) ແພມົນຜືນນີ້ ທີ່ເຂົາມອບໃຫ້
ຖັກຮູບຫົວໃຈ ໃຫ້ໄວ້ເປັນອະນຸສອນ
ຈ້ອງມອງ ຄັ້ງໃດຊວນໃຫ້ອາວອນ
ພາບຄວາມຫຼັງກ່ອນ ຫຼອກຫຼອນດວງໃຈ

2) ດັ່ງມີມົນຊັງ ຝັງໃນຜືນຜ້າ
ຈຶ່ງຄຳນຶງຫາ ເຈົ້າຂອງແພຜ້າບໍ່ຫາຍ
ຍິ່ງມອງ ຍິ່ງຊວນໃຫ້ໝອງດວງໃຈ
ເມື່ອເຂົາແໜງໜ່າຍ ປ່ຽນໃຈໄປຈາກເຮົາ

• | ດວງໃຈຈຶ່ງຊ້ຳ ຣະກຳທຸກຄືນ
| ແພມົນຈຶ່ງຊຶມ ດ້ວຍຢາດນ້ຳຕາອັບເສົາ
| ນາງລືມ ສັນຍາສາບານກ່ອນເກົ່າ
| ປ່ອຍເຮົາ ເຫງົາໃຈ

3) ພຽງແພຜືນນີ້ ທີ່ຄົງເຫຼືອຢູ່
ແຕ່ຂາດຍອດຊູ້ ຂ້າຈຶ່ງຕ້ອງຢູ່ດຽວດາຍ
ໂອ້ເຮົາ ເຝົ້າຫຼົງຖນອມງົມງາຍ
ເຖິງເຂົາແໜງໜ່າຍ ແຕ່ໃຈເຮົາໝັ້ນຄົງ...

# ຝັນດີທີ່ຮັກ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1970

Slow (♩ = 70) (Piano) (Sax)

Bb Eb F

**A**

Bb Bb D7 Gm Bb7 Eb

ເດິກ ດື່ນ ຂ້ອນ ຄືນ ແລ້ວ ສຸດ ທີ່ ຮັກ ອ້າຍ ຂໍ ຝັງ ຝາກ ຮັກ ກ່ອນ ອຳ ລາ

Bb D7 Gm Bb C F

ຝາກສຽງເພງ ນີ້ ພ່ຳ ອອນ ກ່ອນ ຈະ ເຂົ້ານອນ ຫາຍ ໝ້າ ໂປຣດເຖີດ ຂວັນ ຕາ ຈົ່ງ ຢ່າ ລືມ ໄລ...

**B**

Bb Bb D7 Gm Bb7 Eb

ເດິກ ດື່ນ ຂ້ອນ ຄືນ ແລ້ວ ສຸດ ທີ່ ຮັກ ອ້າຍ ຝືນ ຈຳ ຈາກ ທັ້ງ ທີ່ ອາ ລັຍ

Bb D7 Gm Bb F Bb

ຢາກ ຢູ່ ກ່ອມຂວັນ ແນບ ນອນ ຢາກ ຢູ່ ຮ່ອມໝອນ ຄຽງ ໃກ້ ກໍ ຈຳ ຫັກ ໃຈ ເພາະກາຍຂ້ອນ ຄືນ...

**C**

Bb7 Eb Bb F Bb

ຈົ່ງ ນອນ ຝັນ ດີ ຕ ລອດ ນິ ທຣາ ສຸກ ຈິນ ຮຸ່ງ ຟ້າ ອາ ຣຸນ ນີ້ ອື່ນ

D7 Gm Eb F

ຝາກສຽງເພງ ນີ້ ລອຍ ໄປ ໃຫ້ ໄອ້ ກ່ອມຂວັນ ເຊີຍ ຊື່ນ ນີ້ ໃໝ່ ຄ່ອຍ ຄືນ ພົບ - ກັນ...

**D**

Bb D7 Gm Bb7 Eb

ເດິກ ດື່ນ ຂ້ອນ ຄືນ ແລ້ວ ສຸດ ທີ່ ຮັກ ອ້າຍ ຂໍ ສ ລັກ ສຽງແຜ່ວ ຣຳ ພັນ

Bb D7 Gm Bb F Bb (1.)

ປັກດວງໃຈ ນ້ອງ ນາ ຣີ ແນບກາງ ຣີ ດີ ນ້ອງ ນັ້ນ ຢ່າ ໄດ້ ລືມ ກັນ ນ້ອງ ຈົ່ງ ຝັນ ດີ...

(Solo verse C)

**E** Coda

Bb (2.) Eb F Bb Bb

ດີ...

(Sax) ______ (Piano)

*break drums...*

Fine

# ຝັນດີທີ່ຮັກ

Key : Bb
Slow

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1970

1) ເດິກດື່ນຂ້ອນຄືນ ແລ້ວສຸດທີ່ຮັກ
ອ້າຍຂໍຝັງຝາກ ຮັກກ່ອນອຳລາ
ຝາກສຽງເພງນີ້ພໍ່າອອນ ກ່ອນຈະເຂົ້ານອນຫາຍໜ້າ
ໂປຣດເຖີດຂວັນຕາ ຈົ່ງຢ່າລືມໄລ

2) ເດິກດື່ນຂ້ອນຄືນ ແລ້ວສຸດທີ່ຮັກ
ອ້າຍຝືນຈຳຈາກ ທັ້ງທີ່ອາລັຍ
ຢາກຢູ່ກ່ອມຂວັນແນບນອນ ຢາກຢູ່ຮ່ວມໝອນຄຽງໃກ້
ກໍຈຳຫັກໃຈ ເພາະກາຍຂ້ອນຄືນ

• ຈົ່ງນອນຝັນດີ ຕລອດນິທຣາ
ສຸກຈິນຮຸ່ງຟ້າ ອາຣຸນມື້ອື່ນ
ຝາກສຽງເພງນີ້ລອຍໄປ ໃຫ້ໄອ້ກ່ອມຂວັນເຊີຍຊື່ນ
ມື້ໃໝ່ຄ່ອຍຄືນ ພົບກັນ

3) ເດິກດື່ນຂ້ອນຄືນ ແລ້ວສຸດທີ່ຮັກ
ອ້າຍຂໍສລັກ ສຽງແຜ່ວອຳພັນ
ປັກດວງໃຈນ້ອງນາຣີ ແນບກາງອີດີນ້ອງນັ້ນ
ຢ່າໄດ້ລືມກັນ ນ້ອງຈົ່ງຝັນດີ...

# ອົກຫັກ

ເນື້ອຮ້ອງ & ທຳນອງ : ສນອງ ອຸ່ນອົງ
ນັກຮ້ອງຕົ້ນສະບັບ : ຈ. ປະຈັກໃຈ

Ramvong Lao

1969




(Sax + Accordeon) ___

Dm













Gm Dm F Gm
















(Sax + Accordeon) ___ rallentando ...

# ອິກຫັກ

Key : Dm
Ramvong

ເນື້ອຮ້ອງ & ທຳນອງ : ສນອງ ອຸ່ນວົງ
ນັກຮ້ອງຕົ້ນສະບັບ : ຈ. ປະຈັກໃຈ

1969

1) ໂອ້ຍ... ອົກຫັກ
ຖືກຄົນຮັກ ເຂົາມາລອງລໍ້
ຫົວໃຈຂ້າ ເປັນບ້າເປັນບໍ
ເໝືອນຄົນບໍ່ພໍ ເພາະຜູ້ຍິງເຂົາລອງ

2) ໂອ້ຍ... ອ່ອນຈິດ
ເຝົ້າແຕ່ຄິດ ເມື່ອມາຖືກບ້ອງ
ຫຼົງຄິດວ່າ ຈະບໍ່ຖືກລອງ
ສັນໃດພຸ່ມພວງ ລອງຈົນອົກພັງ

• ນັບຕັ້ງແຕ່ ນີ້ຕໍ່ໄປ
ຈະບໍ່ກ່ຽວຍິງໃດ ບໍ່ສົນໃຈຈັກຄັ້ງ
ຫາກຜູ້ຍິງ ຈະລອງຂ້າໃຫ້ອົກພັງ (ຊ້ຳ)
ຢ່າຫວັງ ຢ່າຫວັງ ບໍ່ເໝືອນດັ່ງທີ່ເຄີຍເປັນມາ

3) ໂອ້ຍ... ອົກຫັກ
ບອກວ່າຮັກ ເປັນຫຍັງລອງຂ້າ
ບໍ່ຮັກແທ້ ຢ່າເອີ່ຍອາຈາ
ຢ່າເປັນໂມຣາ ຂ້າຄົນທັງເປັນ...

# ຄິດຮອດເຈົ້າ

ເນື້ອຮ້ອງ & ທຳນອງ : ຄຳແພງ ຈຸນລະມະນີ
ນັກຮ້ອງຕົ້ນສະບັບ : ຈ. ປະຈັກໃຈ

Ramvong Lao

1970

(♩ = 107)

Dm Gm Dm

(Sax + Accordeon)

A

Dm F Gm Dm

(ສອຍ) ຄິດ ຮອດ - ເຈົ້າ ກິນ - ເຂົ້າ ບໍ່ ລົງ - ຄໍ ໂອ້ ລະ ນໍ ສາວ - ເອີຍ ຈິ່ງ ເຫັນ - ໃຈ ຫຼັບ ບໍ່
ລົງ ພະ ອົງ - ແຕ່ ຫ່ວງ ໃຍ ຈອນ ຈະ ຕາຍ ຢູ່ ແລ້ວ - ສາວ - ເອີຍ...

B

Dm

ນັບ ແຕ່ ຈາກ - ເຈົ້າ - ໄປ ຄິດ ເຖິງ - ຂວັນ - ໃຈ ຢູ່ ທຸກ ແລງ ທຸກ ເຊົ້າ
ຄິດ ວົ່ ໆ - ວອນ - ໆ ຫວນ ເຖິງ - ບັງ - ອອນ ກ່ອນ ຫຼັບ ນອນ ທຸກ ຄັ້ງ
ນອນ ຫຼັບ ຢູ່ - ກໍ - ຝັນ ຝັນ ເຫັນ - ແຈ່ມ - ຈັນ ໄດ້ ມາ ຢືນ ຕໍ່ ໜ້າ

G Dm F

ເມື່ອ___ ໄດ້ ຈາກ - ເຈົ້າ - ມາ ໃນ ອຸ ຣາ ມີ ແຕ່ ວຽບ - ເຫງົາ ຄວາມ ສຸກ
ແກ້ວ___ ນິກ ກາ - ອົ່ນ - ຄອນ ໃຈ ສະ ທ້ອນ ຫວນ ເຖິງ ເບື້ອງ - ຫຼັງ ຄາວ ພອກ
ເມື່ອ___ ໃດ ຕື່ນ - ຈາກ - ຝັນ ໃຈ ສະ ທ້ານ ບໍ່ ເຫັນ ແກ້ວ - ຕາ ຢາກ ຈະ

Gm Dm

ໃຈ ບໍ່ ເຄີຍ ບັນ ເທົາ___ ບໍ່ ເຄີຍ ແບ່ງ ເບົາ___ ເໝືອນ - ຢູ່ ໃກ້ ນາງ...
ເຮົາ ເວົ້າ ສູ່ ກັນ ຟັງ___ ກ່ຽວ ກັບ ຄວາມ ຫວັງ___ ສອງ - ເຮົາ ສ້າງ ມາ...
ນອນ ຢູ່ ທຸກ ເວ ລາ___ ໃຫ້ ຝັນ ເຫັນ ໜ້າ___ ນ້ອງ - ທຸກ ຍາມ

D.S. al Coda

Coda

C

Dm Gm Dm

(Sax + Accordeon)

*rallentando...*

Fine

# ຄິດຮອດເຈົ້າ

Key : Dm
Ramvong

ເນື້ອຮ້ອງ & ທຳນອງ : ຄຳແພງ ຈຸນລະມະນີ
ນັກຮ້ອງຕົ້ນສະບັບ : ຈ. ປະຈັກໃຈ

1970

(ສອຍ) | ຄິດຮອດເຈົ້າ ກິນເຂົ້າບໍ່ລົງຄໍ
ໂອ້ລະນໍ ສາວເອີຍຈົ່ງເຫັນໃຈ
ຫຼັບບໍ່ລົງ ພະວົງແຕ່ຫ່ວງໃຍ
ຈອນຈະຕາຍ ຢູ່ແລ້ວສາວເອີຍ

1) ນັບແຕ່ຈາກເຈົ້າໄປ ຄິດເຖິງຂວັນໃຈຢູ່ທຸກແລງທຸກເຊົ້າ
ເມື່ອໄດ້ຈາກເຈົ້າມາ ໃນອຸຣາມີແຕ່ງຽບເຫງົາ
ຄວາມສຸກໃຈ ບໍ່ເຄີຍບັນເທົາ
ບໍ່ເຄີຍແບ່ງເບົາ ເໝືອນຢູ່ໃກ້ນາງ...

(ດົນຕຣີ + ສອຍ)

2) ຄິດວິ່ງວອນໆຫວນເຖິງ ບັງອອນກ່ອນຫຼັບນອນທຸກຄັ້ງ
ແກ້ວນິກກາອັ່ນຄອນ ໃຈສະທ້ອນຫວນເຖິງເບື້ອງຫຼັງ
ຄາວພວກເຮົາ ເວົ້າສູ່ກັນຟັງ
ກ່ຽວກັບຄວາມຫວັງ ສອງເຮົາສ້າງມາ...

(ດົນຕຣີ + ສອຍ)

3) ນອນຫຼັບຢູ່ກໍ່ຝັນ ຝັນເຫັນແຈ່ມຈັນໄດ້ມາຢືນຕໍ່ໜ້າ
ເມື່ອໃດຕື່ນຈາກຝັນ ໃຈສະທ້ານບໍ່ເຫັນແກ້ວຕາ
ຢາກຈະນອນ ຢູ່ທຸກເວລາ
ໃຫ້ຝັນເຫັນໜ້າ ນ້ອງທຸກຍາມ...

(ດົນຕຣີ)

# ບໍ່ລືມວຽງຈັນ

ເນື້ອຮ້ອງ & ທຳນອງ : ສ ແສງສິຣິອັນ
ນັກຮ້ອງຕົ້ນສະບັບ : ທັນຕະອັນ ຣາຊາສັກດ໌

1968






























# ບໍ່ລືມວຽງຈັນ

Key : Gm
Slow

ເນື້ອຮ້ອງ & ທຳນອງ : ສ ແສງສີຣິວັນ
ນັກຮ້ອງຕົ້ນສະບັບ : ທັນຕະວັນ ຣາຊາສັກດ໌

1968

1) ແມ່ນຢູ່ແສນໄກ    ສຸດແດນດິນຟ້ານັ້ນ
ເຖິງມີສຸກສັນ    ກໍລືມວຽງຈັນບໍ່ໄດ້
ຈາກນານແສນນານ    ຍັງຫ່ວງ
ຍາດມິດທັງປວງ    ຂ້າສຸດອາລັຍ
ດວງໃຈຄະນຶງ    ທຸກວັນ

2) ເມື່ອຢູ່ຜູ່ດຽວ    ຍິ່ງປ່ຽວຍິ່ງຄິດເສົ້າ
ເໝືອນນົກທີ່ເຫງົາ    ຢູ່ໃນກົງທອງອັດອັ້ນ
ສຸກກາຍທຸກໃຈ    ເມື່ອຈາກ
ເມື່ອຍາມໄດ້ພາກ    ແຄວ້ນຖິ່ນວຽງຈັນ
ຖິ່ນຖານນະຄອນ    ຂອງລາວ

• ຈາກໄປສູ່ໃຕ້ຟ້າ    ປະເທດອື່ນ
ຫ່າງມິດທີ່ເຄີຍສົດຊື່ນ    ຫ່າງລຸງປ້ານ້າອາວ
ເຖິງມີສຸກຢູ່ວັງທອງ    ບໍ່ເໝືອນເຫັນໜ້າພີ່ນ້ອງລາວ
ຄິດມາແສນເສົ້າ    ຫ່ວງໃຍ

3) ມີອາດຫຼົງລືມ    ພາບແຫ່ງຄວາມຫຼັງນັ້ນ
ເຖິງຟ້າປ່ຽນຜັນ    ກໍລືມວຽງຈັນບໍ່ໄດ້
ເມື່ອຍາມຫວນມາ    ຢ້ຽມຖິ່ນ
ໃຕ້ຟ້າເໜືອດິນ    ລາວນີ້ເມື່ອໃດ
ສຸກໃຈເຫຼືອຄຳ    ກ່າວຂານ

# ຄິດເຖິງ

ເນື້ອຮ້ອງ & ທຳນອງ : ຄຳຫລ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ບຸນທຽງ ມະນີວົງສ໌

Slow (♩ = 63) 1970

E A E A D

Intro

A

1 A A Bm F♯m A

ອ້າຍ ຄົງ ຈະ ຕາຍຍ້ອນຄວາມຄິດ ເຖິງ___ ນ້ອງ___ ຄິດ ຫາ - ແຕ່ ນ້ອງ ຄິດ ຮອດ ແຕ່ ນ້ອງ___ ຜູ່ - ດຽວ

5 A7 D Bm A

ຄວາມຮັກ ຝັງ - ປັກ ຊວງເລິກ ຫົວ - ຄ່ຳ ຍາມເດິກ ສຸດ ແລ ຫຼຽວ ຮັກ ນ້ອງ ຄົນ ດຽວ ຄົນ ດຽວ ສ ເນ ມາ

B

9 A Bm F♯m A

ເຖິງ ຕົວ ຢູ່ ໄກ ຫົວ ໃຈ ຍັງ ໂຫຍ___ ຫອນ__ ເຊົ້າ ຄ່ຳ ບ່າຍຄອນ ຫາ-ນອນ ຢູ່ ທຸກ - ເວ ລາ

13 A7 D Bm A

ຢ້ານ ຮັກ ຈະ ໜ່າຍ ໜ່າຍແໜງ ຣະ ແວງ ໃຈ ຢູ່ ຢາກ ກູ່ ຫາ ຄິດ ແລ້ວ ນ້ຳ ຕາ ອ້າຍ ຫຼັ່ງ ໂລມ ໃຈ

C

17 Bm A D A Bm

ເວ ລາ ນາ ທີ ທີ່ ອ້າຍຫ່າງ ນ້ອງ ອີ...__________ ອ້າຍ - ທຸກ ໝົ່ນ ໝອງ ຢ້ານ ນ້ອງ ປ່ຽນ ໃຈ

21 A Bm A Bm A

ຫາກ ສຸດ ທີ່ ຮັກ ຮັກ ຈິງ ຈາກ ໃຈ______ ອີ...______ ອ້າຍ ຂໍ - ມາ ຕາຍ ຕໍ່ ໜ້າ ຕັກ ນາງ

D

25 A Bm F♯m A

ຮັກ ນາງ ບໍ່ ລືມ ຮັກ ດຽວ ບໍ່ ລືມ ຫຼີງ__ ຫົວ ໃຈ ໝັ້ນ - ຄົງ ຊື່ ຕຣົງ ຕໍ່ ນ້ອງ_____ ບໍ່ ຈາງ

29 A7 D Bm A

ອ້າຍ ຮັກ ອ້າຍຫ່ວງ ຫ່ວງຫຼາຍ ແທບ ທົນ ບໍ່ ໄດ້ ເກືອບໃຈ ພັງ ຫຼົງ ເພີ້ ພະ ວົງ ຮັກ ນາງ ຜູ່ ດຽວ

1. (Solo verse B)

E

33 A Bm F♯m

2.

ດຽວ Coda

Fine

# ຄິດເຖິງ

Key : A
Slow

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໝໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ບຸນທ່ຽງ ມະນີວົງສ໌

1970

1) ອ້າຍຄົງຈະຕາຍ ຍ້ອນຄວາມຄິດເຖິງນ້ອງ
ຄິດຫາແຕ່ນ້ອງ ຄິດຮອດແຕ່ນ້ອງຜູ້ດຽວ
ຄວາມຮັກຝັງປັກ ຊອງເລິກ
ທີ່ວຄ່ຳຍາມເດິກ ສຸດແລຫຼຽວ
ຮັກນ້ອງຄົນດຽວ ຄົນດຽວສເມີມາ

2) ເຖິງຕົວຢູ່ໄກ ຫົວໃຈຍັງໂຫຍຫອນ
ເຊົ້າຄ່ຳບ່າຍຄອນ ຫານອນຢູ່ທຸກເວລາ
ຢ້ານຮັກຈະໜ່າຍ ໜ່າຍແໜງ
ຣະແວງໃຈຢູ່ ຢາກກູ່ຫາ
ຄິດແລ້ວນ້ຳຕາ ອ້າຍຫຼັ່ງໂລມໃຈ

• ເວລານາທີ ທີ່ອ້າຍຫ່າງນ້ອງ ຮື...
ອ້າຍທຸກໝົ່ນໝອງ ຢ້ານນ້ອງປ່ຽນໃຈ
ຫາກສຸດທີ່ຮັກ ຮັກຈິງຈາກໃຈ ຮື...
ອ້າຍຂໍມາຕາຍ ຕໍ່ໜ້າຕັກນາງ

3) ຮັກນາງບໍ່ລືມ ຮັກດຽວບໍ່ລືມຫຼີງ
ຫົວໃຈໝັ້ນຄົງ ຊື່ຕຣົງຕໍ່ນ້ອງບໍ່ຈາງ
ອ້າຍຮັກອ້າຍຫ່ວງ ຫ່ວງຫຼາຍ
ແທບທົນບໍ່ໄດ້ ເກືອບໃຈພັງ
ຫຼົງເພີ້ພະວັງ ຮັກນາງຜູ້ດຽວ

# ຊາຍໃຈຊື່

ເນື້ອຮ້ອງ & ທຳນອງ : ປ. ຕຣີຈັນ

ນັກຮ້ອງຕົ້ນສະບັບ : ປ. ຕຣີຈັນ

1965-66

(♩ = 64)

Slow

Bb F Bb

(Trompet & Sax) ____

A

1 Bb Dm Gm Cm Bb

ອີ ເສດປານ ໃດ ຫົວ - ໃຈ ຜູ່ ຍິງ ນ້ອງ ລືມ ທຸກ ສິ່ງ ເສັຽ ແລ້ວ ຫຼື ນັ້ນ

5 Gm G7 Cm F Dm

ລືມ ທັງ ອາ ຈາ ທີ່ ໃຫ້ ຕໍ່ ກັນ____ ລືມຄວາມສຳ ພັນ ລືມ ກັນ ແລ້ວ ຫຼື ດວງ ໃຈ...

B

9 F Bb Dm Gm Cm Bb

ອີ ເສດປານ ໃດ ຫົວ - ໃຈ ເຈົ້າ ນັ້ນ ຕັດ ຮັກ ສະ ບັ້ນ ບໍ່ ເຫຼືອ ເຍື່ອ ໃຍ

13 Gm G7 Cm F Bb Eb

ປ່ອຍ ໃຫ້ ອ້າຍຕຣີນ ຣະ ທົມ ດຽວ ດາຍ____ຄວາມຫວັງ ທະ ລາຍ ລືມ ກາຍ ລືມ ໃຈ ໂສກ ຕຣີນ...

C

17 Bb Eb F Bb

ຫຼາຍ ປີ ທີ່ ຜ່ານ ໄປ ນັ້ນ ເໝືອນ ເປັນ ຄວາມ ຝັນ ຣະ ທົມ

21 Gm Eb C7 F

ຫຼົງ ຮັກ ຫຼົງ - ປອງ ບໍ່ ໃຫ້ ຊື່ນ ຊົມ ຫຼົງ ຫວັງ ຊື່ນ ຊົມ ຮັກ ແທ້ ຈາກ ໃຈ...

D

25 F Bb Dm Gm Cm Bb

ອີ ເສດປານ ໃດ ຫົວ - ໃຈ ເຈົ້າ ນີ້ ຊາດ ໜ້າ ຖ້າ ມີ ຂໍ ພົບ ນ້ອງ ໃໝ່

29 Gm G7 Cm F Bb Eb

ຊາດ ນີ້ ມີ ກັນ ຕ້ອງ ຈຳ ຈາກ ໄກ____ເພາະອ້າຍເປັນ ຊາຍ ເປັນ ຊາຍ ໃຈ ຊື່ ເກີນ ໄປ...

Coda

E

33 Bb

ໄປ... (Trompet & Sax) ____

Fine

# ຊາຍໃຈຊື່

Key : Bb
Slow Rock

ເນື້ອຮ້ອງ & ທຳນອງ : ປ. ຕຣີຈັນ
ນັກຮ້ອງຕົ້ນສະບັບ : ປ. ຕຣີຈັນ

1965-66

1) ວິເສດປານໃດ ຫົວໃຈຜູ້ຍິງ
ນ້ອງລືມທຸກສິ່ງ ເສັຽແລ້ວຫຼືນັ້ນ
ລືມທັງວາຈາ ທີ່ໃຫ້ຕໍ່ກັນ
ລືມຄວາມສຳພັນ ລືມກັນແລ້ວຫຼືດວງໃຈ

2) ວິເສດປານໃດ ຫົວໃຈເຈົ້ານັ້ນ
ຕັດຮັກສະບັ້ນ ບໍ່ເຫຼືອເຍື່ອໃຍ
ປ່ອຍໃຫ້ອ້າຍຕຣົມ ຣະທົມດຽວດາຍ
ຄວາມຫວັງທະລາຍ ລືມກາຍລືມໃຈໂສກຕຣົມ

• ຫຼາຍປີທີ່ຜ່ານ ໄປນັ້ນ
ເໝືອນເປັນຄວາມຝັນ ຣະທົມ
ຫຼົງຮັກຫຼົງປອງ ບໍ່ໃຫ້ຂື່ນຂົມ
ຫຼົງຫວັງຊື່ນຊົມ ຮັກແທ້ຈາກໃຈ

3) ວິເສດປານໃດ ຫົວໃຈເຈົ້ານີ້
ຊາດໜ້າຖ້າມີ ຂໍພົບນ້ອງໃໝ່
ຊາດນີ້ມີກັມ ຕ້ອງຈຳຈາກໄກ
ເພາະອ້າຍເປັນຊາຍ ເປັນຊາຍໃຈຊື່ເກີນໄປ...

# ມິນຮັກວັງວຽງ

ເນື້ອຮ້ອງ & ທຳນອງ : ຄຳຄິມ ເມືອງນະຄອນ & ສ. ບົວລະພັນ
ນັກຮ້ອງຕົ້ນສະບັບ : ກ. ແກ້ວກ່ຳຟ້າ

Slow Bolero 1972

(♩= 61)

C♯m G♯7 C♯m

(Trompet & Sax)

**A**

1 E C♯m E

ວັງ ວຽງ ແຫ່ງ ນີ້ ເໝືອນ ມີ ອຳ ນາດ ມັດ ຈິດ ໃຈ ຝັງ ພູ ຜາ ລ້ອມ ບັງ ວັງ ວຽງ ແສນ ງາມ

5 B F♯m B

ຜາ ແດງ ຜາ ຕັ້ງ ງາມ ຕາ___ ເຂົາ ສູງ ສຽດ ຟ້າ ສີ ຄາມ___ ເບິ່ງ ແລ້ວ ທຸກ ຍາມ ໃຫ້ ແສນ ເພີນ ໃຈ...

**B**

9 E C♯m E

ແຄມ ລຳ ນ້ຳ ຊອງ ສອງ ເຮົາ ຄຽງ ຄູ່ ໄດ້ ຢູ່ ໃກ້ ກັນ ກອດ ນ້ອງ ບໍ່ ນານ ອ້າຍ ກໍ ຈາກ ໄກ

13 B F♯m B E

ລາ ນ້ອງ ໄປ ສູ່ ແນວ ຣົບ___ ເພື່ອ ຣົບ ສັດ ຣູ ແດນ ໄກ___ ໃຫ້ ສິ້ນ ເປັນ ຊາຍ ຊາດ ເຊື້ອ ຄົນ ລາວ... ບໍ່ ດົນ ປານ

**C**

17 A Am C♯m E B E

ໃດ ອ້າຍ-ຈະ ກັບ ມາ ຫາ ໄປ ແລ້ວ ບໍ່ ແມ່ນ ໜີ ໜ້າ ຈະ ກັບ ມາ ຢູ່ ຄູ່ ນ້ອງ ສາວ ບໍ່ ລືມ ອ່ອນ

21 C♯m F♯m E B

ຊ້ອນ ຖ້າ ນອນ ເຄີຍ ໄປ ສອງ ເຮົາ ແມ່ນ ວ່າ ຢູ່ ໄກ ນ້ອງ ສາວ ນ້ອງ ເຈົ້າ ເຊື່ອ ໃຈ ເຖີດ ໜາ...

**D**

25 E C♯m E

ໄກ ພຽງ ແຕ່ ຕົວ ຫື່ອ ໃຈ ຢູ່ ໃກ້ ອາ ລັຍ ເຈົ້າ ຫຼາຍ ຖ້າ ອ້າຍ ບໍ່ ຕາຍ ຄົງ ໄດ້ ກັບ ມາ

29 B F♯m B E

1.

ສາວ-ເອີຍ ໂອ້ ສາວ ວັງ ວຽງ___ ສຽງ ນີ້ ຄື ສຽງ-ເພງ ລາ___ ອ້າຍ ຈະ ກັບ ມາ ຖ້າ ນ້ອງ ບໍ່ ລືມ...

(Solo verse B)

Coda 𝄌

**E**

33 E E B E

2.

ລືມ... (Trompet)

Fine

# ນິນຮັກວັງວຽງ

Key : E
Slow Bolero

ເນື້ອຮ້ອງ & ທຳນອງ : ຄຳຄືນ ເມືອງນະຄອນ & ສ. ບົວລະພັນ
ນັກຮ້ອງຕົ້ນສະບັບ : ກ. ແກ້ວກ່ຳພ້າ

1972

1) ວັງວຽງແຫ່ງນີ້ ເໝືອນມີອຳນາດມັດຈິດໃຈຝັງ
ພູຜາລ້ອມບັງ ວັງວຽງແສນງາມ
ຜາແດງຜາຕັ້ງງາມຕາ ເຂົາສູງສຽດຟ້າສີຄາມ
ເບິ່ງແລ້ວທຸກຍາມ ໃຫ້ແສນເພີນໃຈ

2) ແຄມລຳນ້ຳຊອງ ສອງເຮົາຄຽງຄູ່ໄດ້ຢູ່ໃກ້ກັນ
ກອດນ້ອງບໍ່ນານ ອ້າຍກໍຈາກໄປ
ລານ້ອງໄປສູ່ແນວຣົບ ເພື່ອຣົບສັຕຣູແດນໄກ
ໃຫ້ສົມເປັນຊາຍ ຊາດເຊື້ອຄົນລາວ

• ບໍ່ດົນປານໃດ ອ້າຍຈະກັບມາຫາ
ໄປແລ້ວບໍ່ແມ່ນໜີໜ້າ ຈະກັບມາຢູ່ຄູ່ນ້ອງສາວ
ບໍ່ລືມອ່ອນຊ້ອນ ຖ້ານອນເຄີຍໄປສອງເຮົາ
ແມ່ນວ່າຢູ່ໄກນ້ອງສາວ ນ້ອງເຈົ້າເຊື່ອໃຈເຖີດໜາ

3) ໄກພຽງແຕ່ຕົວ ຫົວໃຈຢູ່ໃກ້ອາລັຍເຈົ້າຫຼາຍ
ຖ້າອ້າຍບໍ່ຕາຍ ຄົງໄດ້ກັບມາ
ສາວເອີຍໂອ້ສາວວັງວຽງ ສຽງນີ້ຄືສຽງເພງລາ
ອ້າຍຈະກັບມາ ຖ້ານ້ອງບໍ່ລືມ...

# ອອດສາວ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ວົງເດືອນ ວົງພະຈັນ

Cha Cha Cha

1970

(♩= 118) G Em G

(Organ) ______ ໜຸ່ມ

**A** G G7 C D

1 ໆ ແໜ້ນ ໆ__ ນະ ນ້ອງ__ ບໍ່ ຢາກ ຈອງ__ ໄວ້ ເປັນ ຜືວ ຫວະ__ ປີ

5 ນີ້ ອ້າຍ ອາ ຍຸ ຊາວ ກວ່າ__ ທຳ ໄຮ່ - ໄຖ - ນາ ຫາ - ປາ ລ້ຽງ__ ຕົວ... ຜາ

**B** G G7 C D G

9 ສາດ ອ້າຍ ກະ ມີ__ ສອງ ຫຼັງ__ ແຕ່ ໂປຣດ ຟັງ__ ອ້າຍ ໄດ້ ຢູ່ ເຮືອນ ຄືວ__ ຮີຖ ໂດຍ

13 ສານ__ ອ້າຍ ມີ ໄປ ທີ່ວ__ ນ້ອງ ຢ່າ - ຫວັ່ນ ກົວ__ ຢ່າ ມົວ ນ້ອຍ__ ໃຈ...

**C** G Am G Am Em D Am D

17 ເຫຼົ້າ__ ອ້າຍ ກະ ບໍ່ ກິນ__ ເຮ ໂຮ ອີນ ອ້າຍ ກະ ສູບ ບໍ່ ໄດ້__ ການ ພະ

21 ນັນ ໂອ້ຍ ແຮ່ງ ບໍ່ ໃກ້__ ສາ ບານ ກະ ໄດ້ ບໍ່ ເຄີຍ ບໍ່ ເຄີຍ... ເປົ່າ

D.S. al Coda

**D** G G7 C D G

25 ປ່ຽວ ດຽວ ດາຍ__ ໃຈ ເຫງົາ__ ອ້າຍ ຢາກ ເອົາ ນ້ອງ ໄວ້ ເປັນ ຄູ່__ ເຊີຍ ມັກ ເຈົ້າ

29 ຫຼາຍ__ ອີດ ບໍ່ ໄຫວ__ ແລ້ວ ເອີຍ__ ອ້າຍ ຢາກ__ ເປັນ ເຂີຍ__ ເປັນ ເຂີຍ ພໍ່__ ນາງ...

1. (Solo verse C)

Coda **E** G

33 2. ນາງ... (Sax) ______

Fine

# ອອດສາວ

Key : G
Cha Cha Cha

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ວົງເດືອນ ວົງພະຈັນ

1970

1) ໜຸ່ມໆແໜ້ນໆ ນະນ້ອງ
ບໍ່ຢາກຈອງ ໄວ້ເປັນຜົວຫວະ
ປີນີ້ອ້າຍ ອາຍຸຊາວກວ່າ
ທຳໄຮ່ໄຖນາ ຫາປາລ້ຽງຕົວ

2) ຜາສາດອ້າຍກະ ມີສອງຫຼັງ
ແຕ່ໂປຣດຟັງ ອ້າຍໄດ້ຢູ່ເຮືອນຄົວ
ຣົຖໂດຍສານ ອ້າຍມີໄປທົ່ວ
ນ້ອງຢ່າຫວັ່ນກົວ ຢ່າມົວນ້ອຍໃຈ

• ເຫຼົ້າ ອ້າຍກະບໍ່ກິນ
ເຮໂຣອີນ ອ້າຍກະສູບບໍ່ໄດ້
ການພະນັນ ໂອ້ຍແຮ່ງບໍ່ໃກ້
ສາບານກະໄດ້ ບໍ່ເຄີຍບໍ່ເຄີຍ

3) ເປົ່າປ່ຽວດຽວດາຍ ໃຈເຫງົາ
ອ້າຍຢາກເອົາ ນ້ອງໄວ້ເປັນຄູ່ເຊີຍ
ມັກເຈົ້າຫຼາຍ ອິດບໍ່ໄຫວແລ້ວເອີຍ
ອ້າຍຢາກເປັນເຂີຍ ເປັນເຂີຍພໍ່ນາງ...

# ຄືນລອງ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ

ນັກຮ້ອງຕົ້ນສະບັບ : ວິຈິດ ແສງຈັນທຣ໌

Twist

(♩ = 140)

1970

F♯ G♯m C♯ F♯

(Intro) ________ ສຸດ

8 **A**

F♯ C♯7

ຊ້ຳ ຣະ ກັມ ຣິ ທັຍ ໝອງ_ ເສົ້າ ເຊື່ອ ເຂົາ ຮັກ ເຮົາ ຈຶ່ງ ເສົ້າ ໜັກ

13

F♯ B G♯m C♯

ໝາ ຫຼົງ ລືມ ລອງ ລົ້ນ ຍິ່ງ ມານ ຍາ ຫຼົງ ອາ ຈາ ທີ່ ເພີນ ໂນ້ມ ໃຈ... ທີ່ -

18 **B**

F♯ C♯7

ແທ້ ເຂົາ ເປັນ ເໝືອນເຊັ່ນ ຜີ ສາດ ໂຫດ ຮ້າຍ ບັງ ອາດ ຟາດຟັນ ຈິດ

23

F♯ B C♯ F♯

ໃຈ ແກ້ງ ຮັກ ຈິງ ແລ້ວທຳ ໃຫ້ ຮ້ອງ_ ໄຫ້ ຊ້ຳ ເທົ່າ ໃດ ບໍ່ ສິນ ໃຈ ຍິ່ງ ຊອກ ຊ້ຳ... ຄືນ

28 **C**

F♯ C♯7 F♯

ລອງ ໃຫ້ ຄືນ ລອງ ໃຫ້ ຄືນ ລອງ ເກີດ ມາ ກໍ ຄິງ ເພື່ອ ລອງ ໃຫ້ ຊາຍ ໂສກ ຊ້ຳ ຄືນ

34

C♯7 F♯

ລອງ ຕ້ອງ ຈັກ ອັນ ຄິງ ຣະ ກັມ ຊອກ ຊ້ຳ ບາບ ກັມ ຄິງ ຕາມ ສ ນອງ... ຊ່າງ

40 **D**

F♯ C♯7

ຮ້າຍ ເຫຼືອ ທົນ ໃຫ້ ຄືນ ໃຈ ໂຫດ ຫຼອກ ລອງ ລີງ ໂຫດ ໃຫ້ ຊາຍ ຮ່ຳ

45

F♯ B C♯ To Coda F♯ (Solo verse B)

ຮ້ອງ ແສນ ເສັຽ ດາຍ ຮູບ ຊີງ ອາດ ຄ່ຽມ ຄ່ອງ ໃຈ ນ້ອງ ໂຫດໂກດ ສາມານຍິ່ງ ກວ່າ ໃຜ...

Coda

50 **E**

F♯ C♯7 F♯ C♯7

ໃຜ... ໃຈ ນ້ອງ ໂຫດ ໂກດ ສາ ມານ ຍິ່ງ ກວ່າ ໃຜ... ໃຈ ນ້ອງ ໂຫດ ໂກດ ສາ ມານ ຍິ່ງ ກວ່າ

54

F♯ C♯ F♯

ໃຜ... (Coda) ________ Fine

# ຄືນລອງ

Key : F# — ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
Twist — ນັກຮ້ອງຕົ້ນສະບັບ : ວິຈິຕ ແສງຈັນທຣ໌ — 1970

1) ສຸດຊ້ຳ ຣະກັມຣິທັຍໝອງເສົ້າ
ເຊື່ອເຂົາ ຮັກເຮົາຈຶ່ງເສົ້າໜັກໜາ
ຫຼົງລືມລອງ ລົ້ນຍິ່ງມານຍາ
ຫຼົງອາຈາ ທີ່ເພີນໂນ້ມໃຈ

2) ທີ່ແທ້ ເຂົາເປັນເໝືອນເຊັ່ນຜີສາດ
ໂຫດຮ້າຍ ບັງອາດຟາດຟັນຈິດໃຈ
ແກ້ງຮັກຈິງ ແລ້ວທຳໃຫ້ຮ້ອງໄຫ້
ຊ້ຳເທົ່າໃດ ບໍ່ສິ້ນໃຈຍິ່ງຊອກຊ້ຳ

• ຄືນລອງໂຫ້ຄືນລອງ ໂຫ້ຄືນລອງ
ເກີດມາກໍຄົງເພື່ອລອງ ໃຫ້ຊາຍໂສກຊ້ຳ
ຄືນລອງຕ້ອງຈັກອັນ ຄົງຣະກັມ
ຊອກຊ້ຳບາບກັມ ຄົງຕາມສນອງ

3) ຊ່າງຮ້າຍ ເຫຼືອຫີນໂຫ້ຄືນໃຈໂຫດ
ຫຼອກລອງ ລົງໂທດໃຫ້ຊາຍຮ່ຳຮ້ອງ
ແສນເສັຽດາຍ ຮູບຊີງອາດຄ່ຽມຄ່ອງ
ໃຈນ້ອງໂຫດ ໂກດສາມານຍິ່ງກວ່າໃຜ...

# ຟ້າລືມດິນ

ເນື້ອຮ້ອງ & ທຳນອງ : ປ. ຕຣີຈັນ

ນັກຮ້ອງຕົ້ນສະບັບ : ປ. ຕຣີຈັນ

1970

Slow

(♩ = 75)




(Trumpet...)




ອາ - ສ ນາ ຊາ ຕາ ຂອງ ເຮົາ ແສນ ໂສກ ເສົ້າ ເຫງົາ ໃຈ ເຫຼືອ ທົນ




ຮັກ ແສນຫວານນານ ເຂົ້າ ຜະ ຈົນ ໂຫ້ ຈົນແສນ ຈົນ ທຸກ ຄົນ ເມີນ ສິ້ນ...




ແຕ່ - ດວງ ໃຈ ອ້າຍ ຍັງ ບໍ່ ລືມ ຮັກ ຖູດ ດິ່ນ ຟ້າ ຢ່າ ລືມ ດິນ




ພາ ອະ ນາໄຫວ້ ພົມ ມະ ອິນ ຟ້າ ລືມແລ້ວ ດິນ ຕ້ອງ ສິ້ນ ໝົ່ນ ໝອງດວງ ໃຈ...




ຫຼື ຟ້າ ມີ ຊາຍ ອື່ນ ຊິດ ເຊີຍ ໂຫ້ - ດິນ ນີ້ ເອີຍ ຍັງ ຮັກ ບໍ່ ວາຍ




ຫຼືງ ລະ ເມີ ເພີ້ ເຝົ້າຄອຍ ຫາຍ ທືອ ໃຈຕ້ອງ ຕຣົມ ຣະ ທົມ ທຸກ ຍິ່ງ ໜັກ ໜາ...




ຊາດ - ໃດ ໜາ ຟ້າ ຈະ ປຣາ ນີ ຮັກ ອ້າຍ ນີ້ ດ້ອຍ ໃຈ ເມດ ຕາ




ແມ່ນ ຟ້າ ລືມ ດິນ ສິ້ນເໝືອນ ວ່າ ຈຳ ຕ້ອງ ຂໍ ລາ ຈົນກວ່າ ນິດ ນິ ຣັນ ດອນ...




ລາ... ຈົນ ກວ່າ ນິດ ນິ ຣັນ ດອນ...

# ຟ້າລືມດິນ

Key : Cm
Slow

ເນື້ອຮ້ອງ & ທຳນອງ : ປ. ຕຣີຈັນ
ນັກຮ້ອງຕົ້ນສະບັບ : ປ. ຕຣີຈັນ

1970

1) ວາສນາ ຊາຕາຂອງເຮົາ
ແສນໂສກເສົ້າ ເຫງົາໃຈເຫຼືອທົນ
ຮັກແສນຫວານ ມານເຂົ້າຜະຈົນ
ໃຫ້ຈົນແສນຈົນ ທຸກຄືນເນີນສິ້ນ

2) ແຕ່ດວງໃຈ ອ້າຍຍັງບໍ່ລືມ
ຮັກດູດດື່ມ ຟ້າຢ່າລືມດິນ
ພາວະນາ ໄຫວ້ພົມມະອິນ
ຟ້າລືມແລ້ວດິນ ຕ້ອງສິ້ນໝົ່ນໝອງດວງໃຈ

• | ຫຼືຟ້າມີຊາຍອື່ນ ຊິດເຊີຍ
ໃຫ້ດິນນີ້ເອີຍ ຍັງຮັກບໍ່ວາຍ
ຫຼົງລະເມີ ເພີ້ເຜີ້າຄອຍຫາຍ
ຫົວໃຈຕ້ອງຕຣົມ ຣະທົມທຸກຍິ່ງໜັກໜາ

3) ຊາດໃດໜາ ຟ້າຈະປຣານີ
ຮັກອ້າຍນີ້ ດ້ວຍໃຈເມດຕາ
ແມ່ນຟ້າລືມ ດິນສິ້ນເໝືອນວ່າ
ຈຳຕ້ອງຂໍລາ ຈົນກວ່ານິດນິຣັນດອນ...

# ປີໃໝ່ແລ້ວແກ້ວຕາ

ເນື້ອຮ້ອງ & ທຳນອງ : ຄຳໃບ ຄຳຊະນະ
ນັກຮ້ອງຕົ້ນສະບັບ : ແສງອາຣຸນ ສິດທິພັນ

Slow Bolero 1969

♩ = 81

F F Dm G C F B♭

(Muted Guitar ) (Sax Ensemble)

A

1 F F Am Dm F7 B♭

ປີ ໃໝ່ ແລ້ວ ແກ້ວ - ຕາ ສິດ ຊື່ນ - ເຖິດ ໜາ ຢ່າ ໂສກ ສັນ

5 Dm G C

ລືມ ຄວາມ ຂຸ່ນ ຂ້ອງ ໝອງ ໃຈ ກັນ ໃຫ້ ປີ ເກົ່າ ນັ້ນ ຫອບ ພາ - ໄປ

B

9 F Am Dm F7 B♭

ປີ ໃໝ່ ແລ້ວ ຄືນ ດີ ຂໍ ຈົ່ງ ສຸ ຂີ ຈິດ ແຈ່ມ ໃສ

13 Dm G C F

ມີ ຄວາມ ຄິດ ຕ້ອງ ການ ສິ່ງ ໃດ ກໍ ຂໍ ໃຫ້ ໄດ້ ດັ່ງ ໃຈ - ປອງ ອາ

C

17 Am Dm G C

ຍຸ ຍືນ ຍາວ ໝັ້ນ ວັນ ນະ ນັ້ນ ຂາວ ຜ່ອງ ສຸ

21 Am Dm G C7

ຂະ ສຸຂ ສົມ ປອງ ພະ ລະ ຫ່າງ ໂພຍ ພັຍ

D

25 F Am Dm F7 B♭

ປີ ໃໝ່ ແລ້ວ ແກ້ວ - ຕາ ຮັກ ເຮົາ ນັ້ນ ໜາ - ຈົ່ງ ແຈ່ມ ໃສ

29 Dm G C To Coda 1. F B♭

ເດືອນ ປີ ຜ່ານ ຄືນ ໝຸນ ວຶນ ໄປ ຮັກ ເຮົາ ຢ່າ ໄດ້ ປ່ຽນ ໄປ ຕາມ...

(Solo verse D)

E

33 2. F D.S. al Fine

ຕາມ... ອາ...

F

Coda 34 F Dm B♭ C F

ຕາມ... (Sax Ensemble)

Fine

# ປີໃໝ່ແລ້ວແກ້ວຕາ

Key : F
Slow Bolero

ເນື້ອຮ້ອງ & ທຳນອງ : ຄຳໃບ ຄຳຊະນະ
ນັກຮ້ອງຕົ້ນສະບັບ : ແສງອາຣຸນ ສິດທິພັນ

1969

1) ປີໃໝ່ແລ້ວ ແກ້ວຕາ
ສິດຊື່ນເຖິດໝາ ຢ່າໂສກສັນ
ລືມຄວາມຂຸ່ນ ຂ້ອງໝອງໃຈກັນ
ໃຫ້ປີເກົ່ານັ້ນ ຫອບພາໄປ

2) ປີໃໝ່ແລ້ວ ຄືນດີ
ຂໍຈົ່ງສຸຂີ ຈິດແຈ່ມໃສ
ມີຄວາມຄິດ ຕ້ອງການສິ່ງໃດ
ກໍຂໍໃຫ້ໄດ້ ດັ່ງໃຈປອງ

• | ອາຍຸ ຍືນຍາວໝັ້ນ
| ວັນນະ ນັ້ນຂາວຜ່ອງ
| ສຸຂະ ສຸກສົມປອງ
| ພະລະ ຫ່າງໂພຍພັຍ

3) ປີໃໝ່ແລ້ວ ແກ້ວຕາ
ຮັກເຮົານັ້ນໝາ ຈົ່ງແຈ່ມໃສ
ເດືອນປີຜ່ານ ຄືນໝູນວຽນໄປ
ຮັກເຮົາຢ່າໄດ້ ປ່ຽນໄປຕາມ...

# ອີກພຽງຄັ້ງດຽວ

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິອັນ

ນັກຮ້ອງຕົ້ນສະບັບ : ຄຳເດີນ ຊານຸບານ

1970

(♩ = 65)

Slow

C Eb D Gm

(Organ) (Guitar)

A

Gm Bb F Cm D Gm

ຖ້າ ຫາກ ຍັງ ຄິດ ບອກ ໃຈ ກັນ ອີກ ຮັກ ແສນ ຮັກ ອ້າຍ ຈຳ ຕ້ອງ ຫຼີກ ຫຼີກ ທາງ ໃຫ້ ນ້ອງ ເດີນ ໄປ ທັ້ງ ນັ້ນ ທັ້ງ

D Cm Gm C F Cm D Gm

ນີ້ ທີ່ ພົບ ພານ__ ອ້າຍແທບ ອິດ ກັ້ນ ໄວ້ ບໍ່ ໄດ້ ອີກ ພຽງ ຄັ້ງ ດຽວ ຄັ້ງ ດຽວ ດວງ ໃຈ ວອນນ້ອງ ຢ່າ ກະ ທຳ...

B

Gm Bb F Cm D Gm

ສິ່ງ ໃດ ທີ່ ນ້ອງ ນັ້ນ ເຄີຍ ພັ້ງ ຜິດ ຂໍ ໃຫ້ ນ້ອງ ເລີກ ມັນ ດ້ວຍ ຈິດ ແຫ່ງ ຄວາມ ສຳ ນຶກ ບາບ ກັມ ແມ່ນ ນ້ອງ ນັ້ນ

D Cm Gm C F Cm Gm Bb

ຄິດ ອອດ ທະ ນິງ__ ວ່າ ຕົວ ເປັນ ຫິງ ສຸດ ແສນ ງາມ ແອບ ມີ ຄູ່ ຄອງ ຫຼາຍ ຄົນ ປຣະ ຈຳ ຈະ ຊໍ້າ ເມື່ອ ຄວາມ ງາມ ສິ້ນ...

C

Bb Cm Bb D Eb F Gm

ອ້າຍ... ຢູ່ ຄອງ ກັບ ນ້ອງ ດ້ວຍ ໃຈ ກໍ ຄອນ ເອົາ ໃຈ ເລີກ - ໄປ ສ້າງ ຮອຍ ມົນ ທິນ

Cm Eb F Gm Dm F Gm F

ອ້າຍ ຍອມ ສ ລະ ຮັກ ອື່ນ ມາ ເພື່ອ ນ້ອງ ທັງ ສິ້ນ ເອົາ ຄວາມ ດີ ລ້າງ ຮອຍ ຣາ ຄີນ ໃຜ ຈະ ຫຍາມ ໝິ່ນ ບໍ່ ຫວັ່ນ ບໍ່ ໄຫວ...

D

Gm Bb F Cm D Gm

ອີກ ພຽງ ນິ່ງ ຄັ້ງ ຖ້າ ຍັງ ໃຫ້ ເກີດ ຮັກ ອ້າຍ ນີ້ ກໍ ຄືງ ລະ ເບີດ ແຕກ ພັງ ຄວາມ ຫວັງ ທະ ລາຍ ແມ່ນ ນ້ອງ ຮັກ

D Cm Gm C F Cm Gm Bb

ແທ້ ຈິ່ງ ຄິດ ດູ__ແອບ ໄປ ມີ ຊູ້ ບາບ ເທົ່າ ໃດ ແຕ່ ມັນ ແລ້ວ ມາ ອ້າຍ ຍອມ ອະ ພັຍ ແຕ່ ນີ້ ຕໍ່ ໄປ ຂໍ ນຳ...

(Solo verse B)

Coda

E

Gm Cm G D7 Gm

(Organ)

Fine

# ອີກພຽງຄັ້ງດຽວ

Key : Bb
Slow

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິວັນ
ນັກຮ້ອງຕົ້ນສະບັບ : ຄຳເຕີມ ຊານຸບານ

1970

1) ຖ້າຫາກຍັງຄິດ ນອກໃຈກັນອີກ
ຮັກແສນຮັກອ້າຍຈຳຕ້ອງຫຼີກ ຫຼີກທາງໃຫ້ນ້ອງເດີນໄປ
ທັ້ງນັ້ນທັ້ງນີ້ທີ່ພົບພານ ອ້າຍແທບອົດກັ້ນໄວ້ບໍ່ໄດ້
ອີກພຽງຄັ້ງດຽວຄັ້ງດຽວດວງໃຈ ວອນນ້ອງຢ່າກະທຳ

2) ສິ່ງໃດທີ່ນ້ອງ ນັ້ນເຄີຍພັ້ງຜິດ
ຂໍໃຫ້ນ້ອງເລີກມັນດ້ວຍຈິດ ແຫ່ງຄວາມສຳນຶກຂາບກັນ
ແມ່ນນ້ອງນັ້ນຄິດອວດທະນົງ ວ່າຕົວເປັນທົງສຸດແສນງາມ
ແອບມີຄູ່ຄອງຫຼາຍຄົນປຣະຈຳ ຈະຊ້ຳເມື່ອຄວາມງາມສິ້ນ

• ອ້າຍຢູ່ຄອງ ກັບນ້ອງດ້ວຍໃຈ
ກໍຄວນເອົາໃຈ ເລີກໄປສ້າງຮອຍມົນທິນ
ອ້າຍຍອມສລະ ຮັກອື່ນມາເພື່ອນ້ອງທັງສິ້ນ
ເອົາຄວາມດີລ້າງຮອຍຣາຄີນ ໃຜຈະທຍາມໝິ່ນບໍ່ຫວັ່ນບໍ່ໄຫວ

3) ອີກພຽງນີ່ງຄັ້ງ ຖ້າຍັງໃຫ້ເກີດ
ຮັກອ້າຍນີ້ກໍຄົງລະເບີດ ແຕກພັງຄວາມຫວັງທະລາຍ
ແມ່ນນ້ອງຮັກແທ້ຈື່ງຄິດດູ ແອບໄປມີຊູ້ບາບເທົ່າໃດ
ແຕ່ມັນແລ້ວມາອ້າຍຍອມອະພັຍ ແຕ່ນີ້ຕໍ່ໄປ ຂໍນຳ...

# ຫຼວງພຣະບາງເມືອງງາມ

ເນື້ອຮ້ອງ & ທຳນອງ : ບຸນທັນ ສູີພຣິຫົມໄຊຍ໌
ນັກຮ້ອງຕົ້ນສະບັບ : ກ. ວິເສດ

1968

♩ = 66

(Slow Bolero)

F Am Dm B♭ C

(Sax)

A

F F Am Dm F7 B♭ Dm

ໂອ້ - ດິນ ແດນແຄວ້ນແຫ່ງຄວາມ ຝັນ___ ສວຍງາມຕຣະ ການ ດັ່ງ ນິ່ງ ເທ ອັນ ສັນ ສ້າງ

Gm7 F C B♭ G

ສິນ ຄຳ ເລົ່າ - ລື ເມືອງ ຫຼວງພຣະ ບາງ___ ປຣາ ສາດ ວຽງ ວັງ ແວວ ວາວສະດຸດ ຕາ...

B

C F Am Dm F7 B♭ Dm

ຍອດ - ພູ ສີ ສູງ ເດັ່ນງາມ ລ້ຳ___ ວັດ ວາ ອາ ຣາມ ເປັນ ນິ່ງ ຂວັນເມືອງ ສ ງ່າ

Gm7 F C F B♭

ຜອງ ຊົນ ທົ່ວ - ໄປ ໃຈ ລ້ອນເມຕ ຕາ___ ພຸທ - ສາ ສ ນາ ນຳ ພາ ສຸກ ສັນ...

C

F C B♭ C F Am

ດິນ ແດນ ແຫ່ງຄວາມ ວິ ໄລ___ ຫຼຽວ ແລ ແຫ່ງ ໃດ ຊວນ ຈິດ ໃຈ ເບີກ ບານ

Dm D7 Gm Am B♭ D7 Gm

ເພີນ... ທ່ຽວ ຊົມ ພິ ຣິມ ສຳ - ຣານ ພົບ ເຫັນ ແຕ່ ຮອຍ ຍິ້ມ ນັ້ນ ພາ - ຝັນ ຊຶ້ງ___ ຕຣຶງ ໃຈ...

D

C F Am Dm F7 B♭ Dm

ຖິ່ນ - ແດນ ໃດ ໃສ ຈະ ປຽບ ເໝືອນ___ ຝັງ ໃຈ ຕິດ ເຕືອນ ບໍ່ ອາດ ຫຼີງເລືອນລືມ ໄດ້

Gm7 F C F

ຍິ້ມ - ນັ້ນ ແນບ - ຕຣຶງ ຊາບ ຊຶ້ງ ຣິ ທັຍ___ ມີ ຄ່າຄວາມໝາຍ ໄມ ຕຣີ ຕໍ່ ກັນ...

(Solo verse C)

Coda

E

F Dm B♭ C F

Fine

(Sax)

# ຫຼວງພຣະບາງເມືອງງາມ

Key : F
Slow Bolero

ເນື້ອຮ້ອງ & ທຳນອງ : ບຸນທັນ ສຼີພຣິຫົມໄຊຍ໌
ນັກຮ້ອງຕົ້ນສະບັບ : ກ. ວິເສດ

1968

1) ໂອ້ດິນແດນ　　ແຄວ້ນແຫ່ງຄວາມຝັນ
ສວຍງາມຕຣະການ　　ດັ່ງນິ່ງເທວັນສັນສ້າງ
ສິນຄຳເລົ່າລື　　ເມືອງຫຼວງພຣະບາງ
ປຣາສາດວຽງວັງ　　ແວວວາວສະດຸດຕາ

2) ຍອດພູສີ　　ສູງເດັ່ນງາມລ້ຳ
ວັດວາອາຣາມ　　ເປັນມິ່ງຂວັນເມືອງສງ່າ
ຜອງຊົນທົ່ວໄປ　　ໃຈລ້ອນເມຕຕາ
ພຸທສາສນາ　　ນຳພາສຸກສັນ

• ດິນແດນ　　ແຫ່ງຄວາມອິໄລ
ຫຼຽວແລແຫ່ງໃດ　　ຊວນຈິດໃຈເບີກບານ
ເພີນ...ທ່ຽວຊົມ　　ພິຣົມສຳຣານ
ພົບເຫັນແຕ່ຮອຍຍິ້ມນັ້ນ　　ພາຝັນຊຶ້ງຕຣຶງໃຈ

3) ຖິ່ນແດນໃດ　　ໃສຈະປຽບເໝືອນ
ຝັງໃຈຕິດເຕືອນ　　ບໍ່ອາດຫຼີ້ງເລືອນລືມໄດ້
ຍິ້ມນັ້ນແນບຕຣຶງ　　ຊາບຊຶ້ງຣິທັຍ
ມີຄ່າຄວາມໝາຍ　　ໄມຕຣີຕໍ່ກັນ...

# ຄືນທີ່ເຂົາລືມ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ບຸນທົງ ວົງສາລີ

1968

Slow Rock (♩ = 82)

Gm Cm
Intro

Gm Dm Gm B♭ Cm

**A**

D Gm
1 ອ້າຍ ຈົບ ລະ ຕີ ນ້ອງ ຈຶ່ງ ເມີນ *(ຈຶ່ງ ເມີນ ນ້ອງ ຈຶ່ງ ເມີນ)* ອ້າຍ ຂາດ ອ້າຍ ເຂີນ ເງິນທອງ ຂອງ ໃຊ້ *(ເງິນ ທອງ ເງິນທອງ ຂອງ*

Cm Gm
5 *ໃຊ້)* ອ້າຍ ຂາດ ທຸກ ຢ່າງ ຈະ ຄອຍ ເອົາ ໃຈ ນ້ອງ ຈຶ່ງ ປ່ຽນ ໃຈ ຫັນ ໄປ ເປັນ ຂອງ ຄົນ ອື່ນ

**B**

Gm
9 ອ້າຍ ບຸນ ບໍ່ ເຖິງ ດ້ອຍ ກວ່າ ນາງ *(ກວ່າ ນາງ ດ້ອຍ ກວ່າ ນາງ)* ນ້ອງ ຈຶ່ງ ເມີນ ໜາງ ເຫີນ ທາງ ຫວານ ຊື່ນ *(ເຫີນ ທ່າງ ເຫີນ ທາງ ຫວານ*

Cm B♭
13 *ຊື່ນ)* ໄດ້ ໃໝ່ ຊັ້ນ ເບາະ ເກາະ ຜິດ ຄິດ ຝືນ ຫາ ວ່າ ມີນ ທີນ ລ່ອງ ເກີນ ຜິດ ຜີ ຂໍ ນຳ

**C**

E♭ B♭
17 ເຂົາ ຄິງ ລ່ຳ ລວຍ ມັ່ງ ຄັ່ງ ເສດ ຖີ ມາ ຫຼົງ ເຈົ້າ ນີ້ ເທ ວີ ຄົນ ງາມ

Cm B♭ Gm
21 ອ້າຍ ຕ່ຳ ທັງສັກ ຊັບ ສິນ ເງິນ ຄຳ ຕ້ອງ ທົນ ຣະ ກຳ ເໝືອນ ຄົນ ສິ້ນ_ ຫວັງ

**D**

Gm
25 ນ້ອງ ລືມ ລະ ຕີ ຄືນ ສຸກ ສັນ *(ສຸກ ສັນ ຄືນ ສຸກ ສັນ)* ຕົ້ນ ຂາມ ຄືນ ນັ້ນ ແສງຈັນ ກຣະ ຈ່າງ *(ແສງ ຈັນ ແສງຈັນ ກຣະ*

Cm F B♭
29 *ຈ່າງ)* ໃຜ ກອດ ໃຜ ຈູບ ລູບ ໄລ້ ນອນ ນາງ ໃຜ ຄ່ຳ ຄອນ ຄາງ ບໍ່ ລືມ ບໍ່ ເລືອນ ສັນ ຍາ

1. (Solo verse B)

Coda

**E**

B♭ Gm Gm Gm
33 2. ຍາ

*(ຈົບ) ອ້າຍ ຈົບ ນ້ອງ ຈຶ່ງ ລືມ... ນ້ອງ ລືມ ເພາະ ອ້າຍ ຈົບ... ອ້າຍ ຈົບ ນ້ອງ ຈຶ່ງ ລືມ... ນ້ອງ ລືມ ເພາະ ອ້າຍ...*

Repeat till fade out...

# ຄືນທີ່ເຂົາລືມ

Key : Gm
Slow Rock

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ບຸນທົງ ວົງສາລີ

1968

1) ອ້າຍຈົນລະຕິ ນ້ອງຈຶ່ງເມີນ
ອ້າຍຂາດອ້າຍເຂີນ ເງິນທອງຂອງໃຊ້
ອ້າຍຂາດທຸກຢ່າງ ຈະຄອຍເອົາໃຈ
ນ້ອງຈຶ່ງປ່ຽນໃຈ ຫັນໄປເປັນຂອງຄົນອື່ນ

2) ອ້າຍບຸນບໍ່ເຖິງ ດ້ອຍກວ່ານາງ
ນ້ອງຈຶ່ງເມີນໜາງ ເຫີນທາງຫວານຊື່ນ
ໄດ້ໃໝ່ຊັ້ນເບາະ ເກາະຜິດຄິດຝືນ
ຫາວ່າມົນທິນ ລ່ອງເກີນຜິດຜີຂໍນຳ

• ເຂົາຄົງລ່ຳລວຍ ມັ່ງຄັ່ງເສດຖີ
ມາຫຼິງເຈົ້ານີ້ ເທວີຄົນງາມ
ອ້າຍຕ່ຳທັງສັກ ຊັບສິນເງິນຄຳ
ຕ້ອງທົນຣະກຳ ເໝືອນຄົນສິ້ນຫວັງ

3) ນ້ອງລືມລະຕິ ຄືນສຸກສັນ
ຕົ້ນຂາມຄືນນັ້ນ ແສງຈັນກຣະຈ່າງ
ໃຜກອດໃຜຈູບ ລູບໄລ້ນວນນາງ
ໃຜຄ່ຳຄວນຄາງ ບໍ່ລືມບໍ່ເລືອນສັນຍາ...

ອ້າຍຈົນນ້ອງຈຶ່ງລືມ... ນ້ອງລືມເພາະອ້າຍຈົນ...
ອ້າຍຈົນນ້ອງຈຶ່ງລືມ... ນ້ອງລືມເພາະອ້າຍຈົນ...

# ຍັງຮັກນ້ອງຢູ່

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໝໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ບຸນທົງ ວົງສາລີ

1963

Slow Rock (♩ = 80)




Intro




ບໍ່ ເຄີຍ ບໍ່ ເຄີຍ ຮັກ ໃຜ ເທົ່າ ນາງ ບໍ່ ເຄີຍ ຫາ ທາງ ເມີນ ໝາງ ເຈົ້າ ເລີຍ




ອ້າຍ ຍັງ ຮັກ ດວງ ໃຈ ດວງເໝືອນ ເຄີຍ ຢ່າ ຟັງ ຄົນ ເຢີ້ຍ ເອີ່ຍ ສົນ ນິນ ທາ




ບໍ່ ເຄີຍ ບໍ່ ເຄີຍ ຄິດ ລອງ ລໍ້ ກັນ ບໍ່ ເຄີຍ ເຫ ຫັນ ສາ ບານ ສັນ ຍາ




ອ້າຍ ພຽນ ໄຫວ້ ວອນ ຢູ່ ທຸກ ເວ ລາ ຢາກ ໃຫ້ ດິນ ຟ້າ ຊ່ວຍ ເປັນ ພະ ຍານ




ຍັງ ຮັກ ຍັງ ຮັກ ຍັງ ຮັກ ນ້ອງ ຢູ່ ຄິດ ເຖິງ ຍອດ ຊູ້ ຢູ່ ທຸກ ຄືນ ວັນ




ຢາກ ໃຫ້ ເປັນ ຈິງ ເໝືອນ ດັ່ງ ຄວາມ ຝັນ ຢາກ ໃຫ້ ວິ ມານ ໂຫ ຣານ ສົມ ປອງ




ບໍ່ ເຄີຍ ບໍ່ ເຄີຍ ຫຼີ້ງ ຕົວ ຫຼີ້ງ ໃຈ ບໍ່ ເຄີຍ ຄິດ ໄປ ໜີ ໄກ ເນື້ອ ທອງ




(Solo from B)

ອ້າຍ ຍັງ ຊື່ ຕຣົງ ບໍ່ ຫຼົງ ລືມ ນ້ອງ ຢາກ ເປັນ ເຈົ້າ ຂອງ ຢາກ ຄອງ ຄູ່ ນອນ




ນອນ Coda

# ຍັງຮັກນ້ອງຢູ່

Key : Bm
Slow Rock

ເນື້ອຮ້ອງ & ທຳນອງ: ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ບຸນທົງ ວົງສາລີ

1963

1) ບໍ່ເຄີຍບໍ່ເຄີຍ ຮັກໃຜເທົ່ານາງ
ບໍ່ເຄີຍຫາທາງ ເມີນໜາງເຈົ້າເລີຍ
ອ້າຍຍັງຮັກດຽວ ໃຈດຽວເໝືອນເຄີຍ
ຢ່າຟັງຄົນເຍີ້ຍ ເອີ່ຍສິນນິນທາ

2) ບໍ່ເຄີຍບໍ່ເຄີຍ ຄິດລອງລໍ້ກັນ
ບໍ່ເຄີຍເຫຫັນ ສາບານສັນຍາ
ອ້າຍພຽນໄຫວ້ອອນ ຢູ່ທຸກເວລາ
ຢາກໃຫ້ດິນຟ້າ ຊ່ວຍເປັນພະຍານ

• ຍັງຮັກຍັງຮັກ ຍັງຮັກນ້ອງຢູ່
ຄິດເຖິງຍອດຊູ້ ຢູ່ທຸກຄືນວັນ
ຢາກໃຫ້ເປັນຈິງ ເໝືອນດັ່ງຄວາມຝັນ
ຢາກໃຫ້ວິມານ ໂຫຮານສົມປອງ

3) ບໍ່ເຄີຍບໍ່ເຄີຍ ຫຼົງຕົວຫຼົງໃຈ
ບໍ່ເຄີຍຄິດໄປ ໜີໂກເນື້ອທອງ
ອ້າຍຍັງຊື່ຕຣົງ ບໍ່ຫຼົງລືມນ້ອງ
ຢາກເປັນເຈົ້າຂອງ ຢາກຄອງຄູ່ນອນ

# ໝາວໝອກ

ເນື້ອຮ້ອງ & ທຳນອງ : ສນອງ ອຸ່ນອີງ & ສ. ບົວລະພັນ

ນັກຮ້ອງຕົ້ນສະບັບ : ກ. ວິເສດ

Slow Bolero (♩ = 64) 1968

Cm Fm E♭ B♭ Gm Cm

Guitar Hawaïen ___________ Sax ___________

A

1 Cm Fm E♭

ໝາວ - ໝອກເມືອງ ເໜືອເພື່ອ ສາວ - ເມືອງ ໃຕ້ ວັງວຽງສຳ - ຣານເລີງ ໃຈ ໝາວ - ໃນ ຊື່ນໄປ ທຸກ ແຫ່ງ ມີ ສາຍນ້ຳ -

5 Cm Fm B♭ Cm

ຊອງ ໄຫຼ ລ່ອງຜ່ານເນີນ ຫີນ - ແກ່ງ ໝາວ - ໝອກຊ່າງ ມາ ຮ້າຍ - ແຮງ ແຂງ - ໃຈ ຂາດ ຄູ່ - ແອບ ອີງ

B

9 Cm Fm E♭

ໝາວ - ໝອກປານ ໃດ ອ້າຍ ຍັງ ຄິດ ວ່າ ເປັນແດນສຸກສົມ ອຸ ຣາ ພະ ນາແຫ່ງ ນັ້ນງາມ ຍິ່ງ ນົກ ນ້ອຍ - ງອຍ

13 Cm Fm B♭ E♭

ຄຽງ ສິ່ງ ສຽງ ອອດອ້ອນ ສຸກ ຈິງ ໝາວ - ໝອກ ຂາດ ຄົນ ແອບ ອີງ ຂາດ ຍິງ ຍິ່ງ ໝາວ ຣະ ທົມ

C

17 Cm E♭

ພາບ__ ພົກ ສາ ມາ ລາ ຫຼາກ ສີ____ ເໝືອນແດນ ສຸ ຂາ ວະ ດີ ຊ່າງ ງາມ ເຫຼືອ ທີ່ - ຊວນ ຊົມ ຊວນ ໃຈ

21 F Fm E♭ B♭ Cm

ຂ້າ__ ຝັນ ຫາ ໃຝ່ ໃຈ ນິ ຍົມ ທັມ ມະ ຊາດງາມ ສົມ ສຸດ ແສນ ຊື່ນ ຊົມ ປານແດນ ສ ວັນ

D

25 Cm Fm E♭

ໝາວ - ໝອກ ອ້າຍທົນບົນ ເຂົາ ຢູ່ ເຈົ້ຍ ອາ ສັຍ ຖິ່ນ ພັກ ຊິດ ເຊີຍ ບໍ່ ເຄີຍຫວັ່ນ ໄຫວໝາວ ນັ້ນ ເພາະຂ້າ - ຍັງ

29 Cm Fm B♭ E♭ Cm

ມີ ພາ ຣະ ໜ້າ ທີ່ ສຳ ຄັນ ໝາວ - ໝອກ ຫຼື ຈະ ມາ ກັ້ນ ຊີ ວິດ ທະ ຫານ ຕ້ອງ ທົນ

1. (Solo verse B)

E

Coda

33 E♭ Cm Cm

2.

ທົນ Sax ___________ Repeat till fade out...

# ໝາວໝອກ

Key : Cm
Slow Bolero

ເນື້ອຮ້ອງແລະທຳນອງ : ສນອງ ອຸ່ນວົງ & ສ. ບົວລະພັນ
ນັກຮ້ອງຕົ້ນສະບັບ : ກ ວິເສດ

1968

1) ໝາວໝອກເມືອງເໜືອ ເພື່ອສາວເມືອງໃຕ້
ວັງວຽງສຳຣານເລີງໃຈ ໝາວໃນຊື່ນໄປທຸກແຫ່ງ
ມີສາຍນ້ຳຊອງ ໄຫຼລ່ອງຜ່ານເນີນຫີນແກ່ງ
ໝາວໝອກຊ່າງມາຮ້າຍແຮງ ແຂງໃຈຂາດຄູ່ແອບອີງ

2) ໝາວໝອກປານໃດ ອ້າຍຍັງຄິດວ່າ
ເປັນແດນສຸກສົມອຸຣາ ພະນາແຫ່ງນັ້ນງາມຍິ່ງ
ນົກນ້ອຍງອຍຄຽງ ສົ່ງສຽງອອດອ້ອນສຸກຈິງ
ໝາວໝອກຂາດຄົນແອບອີງ ຂາດຍິງຍິ່ງໝາວຣະທົມ

• ພາບພົກສາ ມາລາຫຼາກສີ
ເໝືອນແດນສຸຂາວະດີ ຊ່າງງາມເຫຼືອທີ່ຊວນຊົມ
ຊວນໃຈຂ້າ ຝັນຫາໃຝ່ໃຈນິຍົມ
ທັມມະຊາດງາມສົມ ສຸດແສນຊື່ນຊົມປານແດນສວັນ

3) ໝາວໝອກອ້າຍທົນ ບົນເຂົາຢູ່ເຈົ້ຍ
ອາສັຍຖິ່ນພັກຊິດເຊີຍ ບໍ່ເຄີຍຫວັ່ນໄຫວໝາວນັ້ນ
ເພາະຂ້າຍັງມີ ພາຣະໜ້າທີ່ສຳຄັນ
ໝາວໝອກຫຼືຈະມາກັ້ນ ຊີວິດທະຫານຕ້ອງທົນ...

# ບຸບຜາລາກ່ອນ

ເນື້ອຮ້ອງ & ທຳນອງ : ຈອມຄຳ

ນັກຮ້ອງຕົ້ນສະບັບ : ກ. ວິເສດ

1970

(♩ = 85)

Slow

B

(Guitar Hawaiien)

6

F♯ B E

A

1

B E F♯ B

ທົ້ງ ໆ ທີ່ ໃຈ ນ້ອງ ກໍ ວ່າ ຮັກ ຮັບ ສ ມັກ ຮ່ວມ ຮັກ ມອບ ໃຈ ເປັນ ທັມ___ ແຕ່ ດ້ອຍ ເຫດ

5

F♯ B F♯ B E

ໃດ ຂວັນ ໃຈ ຈິ່ງ ມາ ສ້າງ ກັມ ປ່ອຍ ໃຫ້ ອ້າຍ ຊອກ ຊ້ຳ ຣະ ກັມ ຂື່ນ ຂົມ ດວງ ໃຈ

B

9

B E F♯ B

ອ້າຍ ກໍ ຍັງ ເຄີຍ ໄດ້ ເອີ່ຍ ວາ ຈາ ວ່າ ຈະ ມາ ບູ ຊາ ສູ່ ຂໍ ນ້ອງ ໄປ___ ນ້ອງ ຍິ້ມ ຈຸມ

13

F♯ B F♯ B E

ຈິ ຍິນ ດີ ຕອບ ອ້າຍ ພໍ ໃຈ ວັນ ນຶ່ງ ອ້າຍ - ຈຳ ໄດ້ ສັນ ໃດ ໜໍ ລືມ ອ້າຍ ລືງ

C

17

B E F♯ B F♯

ມິ ອຸ ປ ສັກ ສິ່ງ ໃດ ໃຜ ເດ ສ້າງ ມາ___ ຫຼື ຜູ່ ໃຫຍ່ ຫາ ເຣື່ອງ ມາ ແຍກ ທາງ ຮັກ

21

B 3 E F♯ B E

ລືງ ນ້ອງ - ຄືນ ດີ ບໍ່ ປຣາ ນີ ອ້າຍ ກໍ ຄືງ ຄວນ ຄິດ ພະ ວົງ ທີ່ ໄດ້ ຫຼົງ ສ້າງ ຮັກ ຂຶ້ນ ມາ

D

26

B E F♯ B

ບຸບ ຜາ ຈອມ ໃຈ ນ້ອງ ຊ່າງ ເສັຍ ເມີຍ ບໍ່ ນຶກ ເລີຍ ກ່ອນ ເຄີຍ ຮ່ວມ ຮັກ ສັນ ຍາ___ ຫຼື ວ່າ ໃຈ

30

F♯ B F♯ To Coda B E

ນ້ອງ ໝາຍ ປອງ ລວງ ໃຫ້ ໂສ ກາ ບໍ່ ນຶກ ກະ ຣຸ ນາ ຈຳ ລາ ບຸບ ຜາ ຈອມ ໃຈ...

(Solo verse B)

Coda 𝄌

E

34

B E B

ໃຈ...

Fine

# ບຸບຜາລາກ່ອນ

Key : B
Slow

ເນື້ອຮ້ອງ & ທຳນອງ : ຈອມຄຳ
ນັກຮ້ອງຕົ້ນສະບັບ : ກ. ວິເສດ

1970

1) ທັ້ງໆທີ່ໃຈ ນ້ອງກໍວ່າຮັກ
ຮັບສມັກຮ່ວມຮັກ ມອບໃຈເປັນທັມ
ແຕ່ດ້ວຍເຫດໃດ ຂວັນໃຈຈຶ່ງມາສ້າງກັມ
ປ່ອຍໃຫ້ອ້າຍຊອກຊ້ຳ ຣະກັມຂື່ນຂົມດວງໃຈ

2) ອ້າຍກໍຍັງເຄີຍ ໄດ້ເອີ່ຍວາຈາ
ວ່າຈະມາ ບູຊາສູ່ຂໍນ້ອງໄປ
ນ້ອງຍິ້ມຈຸມຈິ ຍິນດີຕອບອ້າຍພໍໃຈ
ວັນນີ່ງອ້າຍຈຳໄດ້ ສັນໃດໜໍລືມອ້າຍລົງ

• ມີອຸປສັກສິ່ງໃດ ໃຜເດສ້າງມາ
ຫຼືຜູ່ໃຫຍ່ຫາ ເຣື່ອງມາແຍກທາງຮັກລົງ
ນ້ອງຄືນດີ ບໍ່ປຣານີອ້າຍກໍຄົງ
ຄອນຄິດພະວົງ ທີ່ໄດ້ຫຼົງສ້າງຮັກຂຶ້ນມາ

3) ບຸບຜາຈອມໃຈ ນ້ອງຊ່າງເສີຍເມີຍ
ບໍ່ນຶກເລີຍກ່ອນເຄີຍ ຮ່ວມຮັກສັນຍາ
ຫຼືວ່າໃຈນ້ອງ ໝາຍປອງລອງໃຫ້ໂສກາ
ບໍ່ນຶກກະຣຸນາ ຈຳລາບຸບຜາຈອມໃຈ...

# ຢ່າຫ່ອງ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ໄຊຊະນະ ທານະດາບຸດ

1970




(Intro) ___




























(ICoda) ___

# ຢ່າຫ່ວງ

Key : Fm
Bolero

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ໄຊຊະນະ ທານະດາບຸດ

1970

1) ຢ່າຫ່ວງຢ່າຫວງ ອ້າຍເລີຍທູນໃຈ
ອ້າຍຕາຍໄປຈາກ ດວງໃຈແລ້ວນີ້
ຈະມາສິນໃຈ ຫ່ວງໃຍອ້າຍຫຍັງເທວີ
ອ້າຍເລວສິ້ນດີ ນ້ອງເຄີຍປຣະນາມ

2) ຢ່າຫ່ວງຢ່າຫວງ ອ້າຍເລີຍດີກວ່າ
ອ້າຍເລວອ້າຍຊົ່ວ ຢ່າມົວຫຼົງຕາມ
ອາດມີມິນທິນ ເກາະກິນນ້ອງເສັຽຄວາມງາມ
ເສັຽຄຸນນະທັມ ຄວາມງາມແຫ່ງໃຈ

• | ເຖິງອ້າຍຈະສຸກ ທຸກຄືນຊື່ນຊົມ
| ຫຼືຈະຂື່ນຂົມ ເຈັບຊ້ຳເທົ່າໃດ
| ຂໍນ້ອງຢ່າຫ່ວງ ອ້າຍເລີຍຈອມໃຈ
| ຈຶ່ງປ່ອຍອ້າຍໄປ ເມື່ອໃຈບໍ່ປຣາຖນາ

3) ຢ່າຫ່ວງຢ່າຫວງ ອ້າຍເລີຍນາງແກ້ວ
ຂໍເຮົາຈຶ່ງແລ້ວ ດັ່ງເຄີຍແລ້ວມາ
ຫາກຈະຟື້ນຄືນ ອາດຈະສູນເສັຽເວລາ
ອ້າຍມັນໄຮ້ຄ່າ ຂໍຢ່າຫ່ວງໃຍ

# ສິ້ນສຸດກັນທີ

ເນື້ອຮ້ອງ & ທຳນອງ : ສີລາວົງ ແກ້ວ
ນັກຮ້ອງຕົ້ນສະບັບ : ສີລາວົງ ແກ້ວ

1968

Soul Sloopy
(♩ = 125)

Ab Cm Db Eb

(Intro) ອາ... ___ ອາ... ___ ອາ... ___ ອາ... ___

**A**

Ab Eb Cm Fm Db

1) ອ້າຍ ບໍ່ ນຶກ ຝັນ___ ວ່າ ຈອມ ຂວັນ___ ຈະແປ ຜັນ___ ຄອງຊາຍ ໃໝ່___ ສຸດ ທີ່
3) ອ້າຍ ບໍ່ ນຶກ ຝັນ___ ວ່າ ຈອມ ຂວັນ___ ຈະ ແປ ຜັນ___ ລືມ ສັນ ຍາ___ ຖ້າ ບໍ່

Ab Db Gb Eb

ຮັກ ອ້າຍເສົ້າ ໃຈ___ ອ້າຍນ້ອຍ ໃຈ___ ສຸດຂື່ນ ຂົມ...___
ຮັກ ບໍ່ ເມດ ຕາ___ ບອກ ອ້າຍ ມາ___ ຈະ ຫຼີກ ທາງ...___

**B**

Ab Eb Cm Fm Db

2) ນ້ອງ ຊ່າງໃຈ ດຳ___ ບໍ່ ໜ້າ ທຳ___ ໃຫ້ອ້າຍ ຊ້ຳ___ ທຸກຂະ ທົມ___ ສຸດ ທີ່
4) ສິ້ນ ສຸດ ກັນ ທີ___ ຕໍ່ ແຕ່ ນີ້___ ຈະ ຫຼີກ ໜີ___ ໃຫ້ ໄກ ຫ່າງ___ ຈະ ບໍ່

Ab Db Gb Eb Ab

ຮັກ ອ້າຍຕອມ ຕຣົມ___ ສຸດຂື່ນ ຂົມ___ ເສົ້າ ອຸ ຣາ...___
ຄິດ ໃຫ້ ອຸກ ອັ່ງ___ ຈະ ຫຼີກ ທາງ___ ໃຫ້ ດວງ ໃຈ...___

To Coda

**C**

Ab Eb Cm Fm Db

(Solo Guitar...) ___

Ab Db Gb Eb

D.S. al Coda

**D**

Coda

Ab Cm Db Eb

ອາ... ___ ອາ... ___ ອາ... ___ ອາ...

(Repeat 'till fade out...)

# ສິ້ນສຸດກັນທີ

Key : Ab
Soul Sloopy

ເນື້ອຮ້ອງ & ທຳນອງ : ສີລາວົງ ແກ້ວ
ນັກຮ້ອງຕົ້ນສະບັບ : ສີລາວົງ ແກ້ວ

1968

1) ອ້າຍບໍ່ນຶກຝັນ ວ່າຈອມຂວັນ
ຈະແປຜັນ ຄວງຊາຍໃໝ່
ສຸດທີ່ຮັກ ອ້າຍເສົ້າໃຈ
ອ້າຍນ້ອຍໃຈ ສຸດຂື່ນຂົມ

2) ນ້ອງຊ່າງໃຈດຳ ບໍ່ໜ້າທຳ
ໃຫ້ອ້າຍຊ້ຳ ທຸກຣະທົມ
ສຸດທີ່ຮັກ ອ້າຍຕອມຕຣົມ
ສຸດຂື່ນຂົມ ເສົ້າອຸຣາ

3) ອ້າຍບໍ່ນຶກຝັນ ວ່າຈອມຂວັນ
ຈະແປຜັນ ລືມສັນຍາ
ຖ້າບໍ່ຮັກ ບໍ່ເມດຕາ
ບອກອ້າຍມາ ຈະຫຼີກທາງ

4) ສິ້ນສຸດກັນທີ ຕໍ່ແຕ່ນີ້
ຈະຫຼີກໜີ ໃຫ້ໄກຫ່າງ
ຈະບໍ່ຄຶດ ໃຫ້ອຸກອັ່ງ
ຈະຫຼີກທາງ ໃຫ້ດວງໃຈ...

# ໝາວ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ສິນພອງ ຊົງມີໄຊ & ຄຳຫຼ້າ ໜໍ່ແກ້ວ

1968

Ramvong LAO

(♩ = 125)

D G D

(Intro)

A

D G D

(ສອຍ) ໝາວ ໝາວ ໝາວ ໝາວ - ລືມ ຈະ ຕ້ອງ - ຫົ່ມ ຜ້າ ຜູ່ ໃດ ໝາວ ຟ້າ ໝາວ

A D A D

ຟ້າ ຈະ ຕ້ອງ - ຜີງ - ໄຟ ໜຸ່ມ ສາວ ໝາວ ໃຈ ເຮັດຈັ່ງ ໃດ ຈິ ເຊົາ - ໝາວ - ເອີຍ

(To Coda)

B

1.

D G D

ສວັສ ດີ ນ້ອງ ສາວ ນ້ອງ ໝາວໝາວໃຈ ມາ ຈັກ ປີ ຢ່າ ອາຍ ໜ່າຍ ໜີ ໂປຣດຟັງອະ

G A G D

ຈິ ອິ ທິ ແກ້ ໝາວ ເອີຍ ຫາ ຄູ່ ຊູ ເຊີຍ ແນບ ຂ ເນີຍ ຈະ ເຫີຍ - ໝາວ - ພລັນ

C

2.

D G D

ສວັສ ດີ ອ້າຍ ເອີຍ ຂໍ ເຜີຍ ໝາວມາ ຕັ້ງ ເຈັດ ປີ ນ້ອງ ບໍ່ ເຄີຍ ມີ ຜູ່ຫວັງໄມ

G A G D

ຕຣີ ຈັກທີ ກັບ ນ້ອງ ເລີຍ ໃຜ ຂາດ ຄູ່ ເຊີຍ ຮີບ ຈອງ ເລີຍ ຢ່າປ່ອຍໃຫ້ ໝາວ - ຕາຍ

C

3.

D G D

ໜຸ່ມ ສາວ ທັງ ຫຼາຍ ໝັ້ນ ໝາຍ ໄວ້ ນັ້ນ ຈັ່ງ ແຕ່ງ ງານ ຢ່າ ມົວ ໝາວ ກັນ ກອດໝອນເພີ້

G A G D

ຝັນ ເຖິງກັນ ຫວານ ຊື່ນ ເຊີຍ ຫາ ຄູ່ ເຖີດ ເອີຍ ຢ່ານອນ ເສີຍ ເພື່ອນເອີຍຈະ ໝາວ - ຕາຍ

Coda

D

D A D D A D

...ໃຈ ມີ ຄູ່ ໄວ້ ຈິ ເຊົາ - ໝາວ - ເອີຍ... (Coda)

Fine

# ໜາວ

Key : D
Ramvong LAO

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ສົມພອງ ຊິງມີໄຊ & ຄຳຫຼ້າ ໜໍ່ແກ້ວ

1968

(ຮ່ວມ) | ໜາວ ໜາວ ໜາວ ໜາວລົມຈະຕ້ອງຫົ່ມຜ້າ
ຜູ່ໃດໜາວຟ້າ ໜາວຟ້າຈະຕ້ອງຜິງໄຟ
ໝຸ່ມສາວໜາວໃຈ ເຮັດຈັ່ງໃດຈິເຊົາໜາວເອີຍ

(ຊາຍ) ສວັສດີນ້ອງສາວ ນ້ອງໜາວໜາວໃຈມາຈັກປີ
ຢ່າອາຍໜ່າຍໜີ ໂປຣດຟັງວະຈີວິທີແກ້ໜາວເອີຍ
ຫາຄູ່ຊູເຊີຍ ແນບຂເນີຍຈະເຫີຍໜາວພລັນ

(ສອຍ)

(ຍິງ) ສວັສດີອ້າຍເອີຍ ຂໍເຜີຍໜາວມາຕັ້ງເຈັດປີ
ນ້ອງບໍ່ເຄີຍມີ ຜູ່ຫວັງໄມຕຣີຈັກທີກັບນ້ອງເລີຍ
ໃຜຂາດຄູ່ເຊີຍ ຮີບຈອງເລີຍຢ່າປ່ອຍໃຫ້ໜາວຕາຍ

(ສອຍ)

(ຮ່ວມ) ໝຸ່ມສາວທັງຫຼາຍ ໝັ້ນໝາຍໄວ້ນັ້ນຈຶ່ງແຕ່ງງານ
ຢ່າມົວໜາວກັນ ກອດໝອນເພັ້ຝັນເຖິງກັນຫວານຊື່ນເຊີຍ
ຫາຄູ່ເຖີດເອີຍ ຢ່ານອນເສີຍເພື່ອນເອີຍຈະໜາວຕາຍ

(ຮ່ວມ) | ໜາວ ໜາວ ໜາວ ໜາວລົມຈະຕ້ອງຫົ່ມຜ້າ
ຜູ່ໃດໜາວຟ້າ ໜາວຟ້າຈະຕ້ອງຜິງໄຟ
ໝຸ່ມສາວໜາວໃຈ ມີຄູ່ໄວ້ຈິເຊົາໜາວເອີຍ

# ຂາດນາງ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ວົງເດືອນ ວົງພະຈັນ

Sloopy (♩ = 120)

1968

G Em C D7

ລາ ລ່າ ລ້າ ລາ ລ່າ ລາ___ ລາ ລ່າ ລ້າ ລາ ລ່າ

A

1 G Em

ບໍ່ ຢາກ ໄດ້___ ເງິນ ບໍ່ ຢາກ ໄດ້___ ທອງ ແຕ່ ຢາກ ໄດ້___ ນ້ອງ ມາ ນອນ ແນບ___ ຂ້າງ ຈະ ດຶງ ໄປ ໃສ___

6 C G Em D7

___ ບໍ່ ໃຫ້ ເຫີນ - ຫ່າງ ມີ ອ້າຍ ມີ ນາງ___ ຕ ລອດ ເວ ລາ___

B

10 G Em

ຢູ່ ດຽວ ປ່ຽວ ໃຈ ຜູ້ ໃດ ບໍ່ ເຫັນ ຄ່ຳ ຄືນ ເຊົ້າ___ ເຢັນ ເໝືອນ ເປັນ ຄືນ ບ້າ ຂາດ ຄູ່ ຄຽງ ໝອນ___

15 C G D7 G

___ ຍາມ ນອນ ນິ ທຣາ___ ຢາກ ໄດ້ ແກ້ວ - ຕາ ມາ ເປັນ ເພື່ອນ - ໃຈ

C

19 G7 C7 G7 D7 C7

(Solo GUITAR)

D

29 G7 D7 Am Em C G

ຍາມ ນອນ ກໍ ນອນ ບໍ່ ຫຼັບ ຫືວ ໃຈ ແລະ ຕັບ ມັນ ສັ່ນ ມັນ ສາຍ ຢ້ານ

35 Em D7

ໃຊ ຢ້ານ ເຈັບ ຢ້ານ ຕາຍ ຍ້ອນ ຢ້ານ ບໍ່ ໄດ້ - ສາຍ ໃຈ ມາ ກອດ ນອນ

E

39 G C G D7 G D7

(Solo SAXO)

F

48 G7 G Em

ບໍ່ ຢາກ ມີ ເງິນ ບໍ່ ຢາກ ມີ ຄຳ ຢາກ ມີ ງາມ ຂຳ___ ທຸກ ຍາມ ເຊົ້າ ບ່ອນ___ ບໍ່ ມີ ເຊົ້າ ກິນ___

53 C G D7 G

___ ບໍ່ ເຫັນ ອາ ທອນ___ ບໍ່ ເຄີຍ ເດືອດ ຮ້ອນ___ ເທົ່າ ນອນ___ ຂາດ ນາງ ຂາດ

G

Coda 𝄌

57 D7 G D7 G D7 G

ນາງ... ຂາດ ນາງ... ຂາດ ນາງ... ຂາດ ນາງ... ຂາດ ນາງ... ຂາດ ນາງ...

Fine

# ຂາດນາງ

Key : G
Sloopy

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ວົງເດືອນ ວົງພະຈັນ

1968

1) ບໍ່ຢາກໄດ້ເງິນ ບໍ່ຢາກໄດ້ທອງ
ແຕ່ຢາກໄດ້ນ້ອງ ມານອນແນບຂ້າງ
ຈະຕົງໄປໃສ ບໍ່ໃຫ້ເຫີນຫ່າງ
ມີອ້າຍມີນາງ ຕລອດເວລາ

2) ຢູ່ດຽວປ່ຽວໃຈ ຜູ່ໃດບໍ່ເຫັນ
ຄ່ຳຄືນເຊົ້າເຢັນ ເໝືອນເປັນຄືນຂ້າ
ຂາດຄູ່ຄຽງໝອນ ຍາມນອນນິທຣາ
ຢາກໄດ້ແກ້ວຕາ ມາເປັນເພື່ອນໃຈ

• ຍາມນອນ ກໍນອນບໍ່ຫຼັບ
ຫົວໃຈແລະຕັບ ມັນສັ່ນມັນສາຍ
ຢ້ານໂຊຢ້ານເຈັບ ຢ້ານຕາຍ
ຍ້ອນຢ້ານບໍ່ໄດ້ ສາຍໃຈມາກອດນອນ

3) ບໍ່ຢາກມີເງິນ ບໍ່ຢາກມີຄຳ
ຢາກມີງາມຂຳ ທຸກຍາມເຊົ້າບ່ອນ
ບໍ່ມີເຂົ້າກິນ ບໍ່ເຫັນອາທອນ
ບໍ່ເຄີຍເດືອດຮ້ອນ ເທົ່ານອນຂາດນາງ

ຂາດນາງ...ຂາດນາງ ຂາດນາງ...ຂາດນາງ
ຂາດນາງ...ຂາດນາງ

# ຫວນຄິດເຖິງຍາມເຮົາຮັກກັນ

ເນື້ອຮ້ອງ & ທຳນອງ : ວິລລ້ຽມ ດິດທະວົງສ໌

ນັກຮ້ອງຕົ້ນສະບັບ : ວິລລ້ຽມ ດິດທະວົງສ໌

1970

Soul Cha-Cha Mambo (♩ = 128)

A♭ A♭7 D♭ (Organ)

6 A♭ A♭7 D♭ E♭7 (Guitar)

**A**

1 A♭

ມອງ... ມອງ ນະ ພາ ຍາມ ຟ້າ ຄ່ຳ ຄອນ___

5 B♭m E♭7 A♭ E♭7

ຫວນ... ຫວນ ຄິດ ເຖິງ ຍາມ ເຮົາ ຮັກ ກັນ... ___

**B** 𝄋

9 A♭

ນ້ອງ... ແນບ ເອິກ ອ້າຍ ເພາະ ເກງ ຟ້າ ລັ່ນ___

13 B♭m E♭7 A♭ A♭7

ຝົນ... ຕົກ ລິ້ງ ພ່ຳ ທຳ ໃຫ້ ສຸກ ໃຈ ແຕ່ ມາ ບັດ

**C**

17 D♭ A♭

ນີ້ ນ້ອງ ມາ ໜີ ຫ່າງ ໄກ ປ່ອຍ ຖິ້ມ ອ້າຍ

21 Cm B♭7 E♭7

ໄວ້ ກັບ ຄວາມ ມືດ ມົນ ___

**D**

25 A♭

ຍາມ... ຝົນ ຕົກ ມາ ຄາ ໃດ ໃຈ ໝົ່ນ___

29 B♭m E♭7 A♭ E♭7 D.S. al Coda

ທົນ... ຄິດ ເຖິງ ວັນ ຜ່ານ ມາ ບໍ່ ໄຫວ... ___ (Solo verse B)

**E** Coda 𝄌

33 B♭m E♭7 A♭ Fm

(Wistle) ___ (Repeat till fade out...)

# ຫວນຄິດເຖິງຍາມເຮົາຮັກກັນ

Key : Ab
Soul Cha-Cha Mambo

ເນື້ອຮ້ອງ & ທຳນອງ : ວິລລ້ຽມ ດິດທະວົງສ໌
ນັກຮ້ອງຕົ້ນສະບັບ : ວິລລ້ຽມ ດິດທະວົງສ໌

1970

1) ມອງ... ມອງນະພາຍາມຟ້າຄ່ຳຄອນ
ຫວນ... ຫວນຄິດເຖິງຍາມເຮົາຮັກກັນ

2) ນ້ອງ... ແນບເອິກອ້າຍເພາະເກງຟ້າລັ່ນ
ຝັນ... ຕົກລົງພໍ່າທຳໃຫ້ສຸກໃຈ

• | ແຕ່ມາ ບັດນີ້
| ນ້ອງມາໜີ ຫ່າງໄກ
| ປ່ອຍຖິ້ມ ອ້າຍໄວ້
| ກັບຄວາມ ມືດມົນ

3) ຍາມ... ຝັນຕົກມາຄາໃດໃຈໝັ່ນ
ທົນ... ຄິດເຖິງວັນຜ່ານມາບໍ່ໄຫວ

ທົນ... ຄິດເຖິງວັນຜ່ານມາບໍ່ໄຫວ

# ທັມມະຊາດພູເຂົາຄວາຍ

ເນື້ອຮ້ອງ & ທຳນອງ : ສ. ແສງສີຣີວັນ

ສະບັບສຽງຂັບຮ້ອງຂອງ : ຄຳເຕີນ ຊານຸບານ (1994)

1963

Slow Bolero
(♩ = 68)

C Am F G

(Intro)

C Am Dm Em C G C G

**A**

1 C G Am Em C7 F C C7

ຊ່າງ ງາມ ໝັກ ໝາ ຜາ ໂຂດ ຫີນ ຊັນ ພູ ເຂົາ ລຳ ເນົາພະນາ ວັນ ດັ່ງ ສ ວັນ ສ້າງ ມາ___ ຕົ້ນ ແປກ ແມກ

5 F A7 Dm G Am D7 G

ໄມ້ ລົມ ພັດ ໂອ້ນ ໄກວ ງາມ ຕາ ສຽງ ດັ່ງ ຄ້າຍ ກັບ ວ່າ ດົນ ຕຣີ ແຫ່ງ ແດນ ສ ວັນ...

**B**

9 C G Am Em C7 F C C7

ນ້ຳ ເຊາະແກ່ງ ຫີນ ລີນ ຫຼັ່ງ ໄຫຼ ນອງ ນ້ຳ ໃສ ໄຫຼ ເຢັນ ເປັນ ຟອງ ເມື່ອ ແລ ມອງ ສຸກ ສັນ___ ເຫັນ ໝູ່ ມັດ

13 F A7 Dm G C G C C7

ສາ ລ່ອງ ລອຍ ທາ ຣາ ງາມ ນັ້ນ ນົກ ນ້ອຍ ງອຍ ໂຂດ ຫີນ ຊັນ ສົ່ງ ສຽງ ອ່ອນຫວານ ດັ່ງ ນາ ຣີ...

**C**

17 F Dm G C F G Em C7

ພູ ເຂົາຄວາຍ ສວຍ ງາມ ສ ອາດ ງາມ ແທ້ ໂອ້ ທັມ ມະ ຊາດ ສ ວັນ ອາດ ໄວ້ ຫຼື ນີ້___ ຫາກແມ່ນ ຜູ້

21 F C Dm Em F Am G

ໃດ ໄດ້ ໄປ ກໍ ຄືງ ສຸກ ຂີ ດົນ ແດນ ພູ ເຂົາ ຄວາຍ ນີ້ ຊ່າງ ມີ ແຕ່ ສິ່ງ ງາມ ຕາ...

**D**

25 C G Am Em C7 F C C7

ຍິ່ງ ມອງ ຍິ່ງ ງາມ ຍາມ ເມື່ອ ເຊົ້າ ຕຣູ່ ລົມ ໝາວ ຍັງ ໂຊຍ ພັດ ຢູ່ ໝູ່ ນົກ ຮ້ອງ ກູ່ ມາ___ ແສງແດດ ກໍ

29 F A7 Dm G C G To Coda 1. C

ສ່ອງ ທໍ່ວ ທ້ອງ ພະ ລານ ວັນ ນາ ເຫັນ ເມກ ລອຍ ຕາມ ຈອມ ຜາ ຊາຍຊື້ງ ອຸ ຣາ ຂ້າ__ ແທ້__ ເອີຍ...

(Solo verse B)

**E**

Coda

33 2. C Dm Em C G C G C

ເອີຍ... (Coda)

Fine

# ທຳມະຊາດພູເຂົາຄວາຍ

Key : C
Slow Bolero

ເນື້ອຮ້ອງ & ທຳນອງ : ສ. ແສງສີອີວັນ
ນັກຮ້ອງຕົ້ນສະບັບ : ຄຳເຕີມ ຊານຸບານ

1963 *

1) ຊ່າງງາມໝັກໜາ ຜາໂຂດຫີນຊັນ
ພູເຂົາລຳເນົາພະນາວັນ ດັ່ງສວັນສ້າງມາ
ຕົ້ນແປກແມກໄມ້ ລົມພັດໂອ້ນໄກວງາມຕາ
ສຽງດັງຄ້າຍກັບວ່າ ດົນຕຣີແຫ່ງແດນສວັນ...

2) ນ້ຳເຊາະແກ່ງຫີນ ລົມຫຼັ່ງໄຫຼນອງ
ນ້ຳໃສໄຫຼເຢັນເປັນຟອງ ເມື່ອແລນອງສຸກສັນ
ເຫັນໝູ່ມັດສາ ລ່ອງລອຍທາຣາງາມນັ້ນ
ນົກນ້ອຍງອຍໂຂດຫີນຊັນ ສົ່ງສຽງອ່ອນຫວານດັ່ງນາຣີ...

• ພູເຂົາຄວາຍ ສວຍງາມສວາດ
ງາມແທ້ໂອ້ທຳມະຊາດ ສວັນອາດໄວ້ຫຼືນີ້
ຫາກແມ່ນຜູ່ໃດ ໄດ້ໄປກໍຄຶງສຸກຂີ
ດົນແດນພູເຂົາຄວາຍນີ້ ຊ່າງມີແຕ່ສິ່ງງາມຕາ...

3) ຍິ່ງມອງຍິ່ງງາມ ຍາມເມື່ອເຊົ້າຕຣູ່
ລົມໜາວຍັງໂຊຍພັດຢູ່ ໝູ່ນົກຮ້ອງກູ່ມາ
ແສງແດດກໍສ່ອງ ທົ່ວຫ້ອງພະລານວັນນາ
ເຫັນເມກລອຍຕາມຈອມຜາ ຊາບຊຶ້ງອຸຣາຂ້າແທ້ເອີຍ...

(*) ເພງ "ທຳມະຊາດພູເຂົາຄວາຍ"
ບົດປະພັນຂອງ ສ. ແສງສີອີວັນ
ເລີ່ມແຕ່ງເມື່ອປີ ຄ.ສ. 1958-59 ແຕ່ງຈົບສົມບູນປີ ຄ.ສ. 1960
ຄຳເຕີມ ຊານຸບານ ຂັບຮ້ອງໃນປີ ຄ.ສ. 1963 ໄດ້ອັນດັບທີ່ນຶ່ງໃນງານປະກວດເສັງເພງ
ຢູ່ໂຮງຮູບເງົາ "ແສງລາວ" ນະຄອນຫຼວງວຽງຈັນ ເສບັບເລງໂດຍວົງດົນຕຣີ "ປະສານມິຕ".

# ຍິ້ມຫວານ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ

ນັກຮ້ອງຕົ້ນສະບັບ : ຄຳຫຼ້າ ໜໍ່ແກ້ວ

Cha Cha Cha

1970





















# ຍິ້ມຫວານ

Key : F
Cha Cha Cha

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ໜໍ່ແກ້ວ
ນັກຮ້ອງຕົ້ນສະບັບ : ຄຳຫຼ້າ ໜໍ່ແກ້ວ

1970

1) ຍິ້ມ... ຮອຍຍິ້ມແມ່ນາງຊ່າງຫວານ
ຫວານ... ຍິ່ງກວ່ານ້ຳຕານຮ້ອຍເທົ່າ

2) ຍິ້ມ... ຮອຍຍິ້ມນັ້ນຊ່ວຍແບ່ງເບົາ
ເຫັນ... ແລ້ວລືມຄວາມເສົ້າໂສກສັນ

• ຍິ້ມນ້ອງ ມີຄວາມໝາຍ
ຫວານຈິນໃຈອ້າຍ ລະເມີເພີ້ຝັນ
ແມ່ນໄດ້ເຊີຍຊິດຊິມ ທຸກວັນ
ຈະແພງຍິ້ມນັ້ນ ຍິ້ມຫວານປຣະດັບຊີວີ

3) ຍິ້ມ... ຂໍໃຫ້ນ້ອງຍິ້ມອີກທີ
ຫວານ... ຫວານໃຈພຽງນີ້ບໍ່ລືມ...

# ລາ

Ramvong LAO

ເນື້ອຮ້ອງ & ທຳນອງ : ສີລາວົງ ແກ້ວ

ນັກຮ້ອງຕົ້ນສະບັບ : ສີລາວົງ ແກ້ວ

1969

(♩ = 127)

B♭ Gm F B♭ Gm B♭ F B♭

(Organ)

**A**

B♭ Gm F

ລາ ໆ ໆ ຂໍ ເອີ້ນ ສັ່ງ ລາ ເພື່ອນ ຮ່ວມ ສະ ຖາ - ບັນ ຂໍ - ລາ ດ້ວຍ ໃຈ ໂສກ

B♭ F B♭ Gm F

ສັນ ຂໍ - ລາ ກັບ ຄືນ ຖິ່ນ ຖານ ຄືນ ສູ່ ບ້ານ___ ຄືນ ສູ່ ເຮືອນ - ນອນ

**B**

B♭ Gm F

ລາ ໆ ໆ ຂໍ ເອີ້ນ ສັ່ງ ລາ ເພື່ອນ ຮັກ ໄປ ກ່ອນ ຂໍ - ລາ ດ້ວຍ ໃຈ ອາ

B♭ F B♭ Gm F

ອອນ ບໍ່ ນານ ກໍ ຄົງ ຫວນ ຢ້ອນ ຂໍ ຈາກ ຈອນ ລາ ກ່ອນ - ສະ ຫາຍ

**C**

B♭ Gm

ລາ ໆ ໆ ປີ ໜ້າ ຄ່ອຍ ພົບ ກັນ ໃໝ່ ຈາກ ກັນ ກໍ ພຽງ - ແຕ່

B♭ Gm B♭ F

ກາຍ ເຖິງ - ເຮົາ ຈະ ຢູ່ ຫ່າງ ໄກ ແຕ່ ຫົວ - ໃຈ ຍັງ ຄິດ ເຖິງ - ກັນ

**D**

B♭ Gm F

ລາ ໆ ໆ ຂໍ ເອີ້ນ ສັ່ງ ລາ ເພື່ອນ ຮ່ວມ ສະ ຖາ - ບັນ ຂໍ - ລາ ຄູຣູ ບາ ອາ

B♭ F B♭ Gm B♭

ຈານ ຂໍ - ອວນ ເທ ວາ ສ ອັນ ຈົ່ງ ບັນ ດານ ໃຫ້ ທ່ານ ສຸກ ເຖີດ ເອີຍ...

(Solo verse B)

Coda

**E**

B♭ Gm

ລາ... ໆ ໆ ລາ... ໆ ໆ

B♭ Gm

ລາ... ໆ ໆ ລາ... ໆ ໆ

(Repeat till fade out...)

# ລາ

Key : Bb
Ramvong LAO

ເນື້ອຮ້ອງ & ທຳນອງ : ສີລາວົງ ແກ້ວ
ນັກຮ້ອງຕົ້ນສະບັບ : ສີລາວົງ ແກ້ວ

1969

1) ລາ ໆ ໆ ຂໍເອີ້ນສັ່ງລາ ເພື່ອນຮ່ວມສະຖາບັນ
ຂໍລາດ້ວຍໃຈໂສກສັນ ຂໍລາກັບຄືນຖິ່ນຖານ
ຄືນສູ່ບ້ານ ຄືນສູ່ເຮືອນນອນ

2) ລາ ໆ ໆ ຂໍເອີ້ນສັ່ງລາ ເພື່ອນຮັກໄປກ່ອນ
ຂໍລາດ້ວຍໃຈອາວອນ ບໍ່ນານກໍຄືງຫວນຢ້ອນ
ຂໍຈາກຈອນ ລາກ່ອນສະຫາຍ

• ລາ ໆ ໆ ປີໜ້າ ຄ່ອຍພົບກັນໃໝ່
ຈາກກັນກໍພຽງແຕ່ກາຍ ເຖິງເຮົາຈະຢູ່ຫ່າງໄກ
ແຕ່ຫົວໃຈ ຍັງຄິດເຖິງກັນ

3) ລາ ໆ ໆ ຂໍເອີ້ນສັ່ງລາ ເພື່ອນຮ່ວມສະຖາບັນ
ຂໍລາຄຣູບາອາຈານ ຂໍວອນເທວາສວັນ
ຈົ່ງບັນດານ ໃຫ້ທ່ານສຸກເຖີດເອີຍ

ລາ ໆ ໆ ລາ ໆ ໆ ...
ລາ ໆ ໆ ລາ ໆ ໆ ...